# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໘໑

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໘

## ອັງຄຸດຕະຣະນິກາຍ ຈະຕຸກະກະນິບາດ



ສະບັບຄົ້ນຄ້ົວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

**໑. ປະຖົມປັນນາດ** ........................................ ໑

**໑. ພັນທະຄາມະວັກ** ........................................ ໑

ໝວດວ່າດ້ວຍພຸດທະກິດໃນພັນຖະຄາມ ........................................ ໑

໑. ອະນຸພຸດທະສູດ ........................................ ໑

ວ່າດ້ວຍການຕັດສະຣູ້ທຳເປັນເຫດສິ້ນພົບ ........................................ ໑

໒. ປະຖະມະຂະຕະສູດ ........................................ ໒

ວ່າດ້ວຍເຫດໃຫ້ຕົນຖືກກຳຈັດ ສູດທີ ໑ ........................................ ໒

໔. ທຸຕິຍະຂະຕະສູດ ........................................ ໕

ວ່າດ້ວຍເຫດໃຫ້ຕົນຖືກກຳຈັດ ສູດທີ ໔ ........................................ ໕

໕. ອະນຸໂສຕະສູດ ........................................ ໖

ວ່າດ້ວຍບຸກຄົນຜູ້ໄປຕາມກະແສ ........................................ ໖

໖. ອັບປັດສຸຕະສູດ ........................................ ໗

ວ່າດ້ວຍບຸກຄົນຜູ້ມີສຸຕະໜ້ອຍ ........................................ ໗

ກ. ໂສພະນະສູດ ........................................ ໑໐

ວ່າດ້ວຍບຸກຄົນຜູ້ເຮັດໝູ່ໃຫ້ງາມ ........................................ ໑໐

໗. ເວສາຣັດຊະສູດ ........................................ ໑໐

ວ່າດ້ວຍຍານເປັນເຫດໃຫ້ແກ່ກ້າ ........................................ ໑໐

໙. ຕັນຫຸບປາທະສູດ ........................................ ໑໔

ວ່າດ້ວຍເຫດເກີດແຫ່ງຕັນຫາ ........................................ ໑໔

໑໐. ໂຍຄະສູດ ........................................ ໑໒

ວ່າດ້ວຍໂຍຄະ ........................................ ໑໒

**໔. ຈະຣະວັກ** ........................................ ໑ກ

ໝວດວ່າດ້ວຍອິລິຍາບົດຍ່າງ ........................................ ໑ກ

໑. ຈະຣະສູດ ........................................ ໑ກ

ວ່າດ້ວຍອິລິຍາບົດຍ່າງ ........................................ ໑ກ

໒. ປະທານະສູດ ........................................ ໔໐

ວ່າດ້ວຍສຳມັບປະທານ ........................................ ໔໐

໔. ສັງວອນສູດ ........................................ ໔໑

ວ່າດ້ວຍສັງວອນປະທານ ........................................ ໔໑

໕. ປັນຍັດຕິສູດ ........................................ ໔໔

ວ່າດ້ວຍການບັນຍັດສິ່ງທີ່ເລີດ ........ ໔໔
໖. ໂສຂຸມມະສູດ ........ ໔໓
ວ່າດ້ວຍໂສຂຸມມະຍານ ........ ໔໓
໗. ປະຖະມະອະຄະຕິສູດ ........ ໔໔
ວ່າດ້ວຍອະຄະຕິ ສູດທີ ໑ ........ ໔໔
໘. ທຸຕິຍະອະຄະຕິສູດ ........ ໔໕
ວ່າດ້ວຍອະຄະຕິ ສູດທີ ໒ ........ ໔໕
໙. ຕະຕິຍະອະຄະຕິສູດ ........ ໔໕
ວ່າດ້ວຍອະຄະຕິ ສູດທີ ໓ ........ ໔໕
໑໐. ພັດຕຸດເທສະກະສູດ ........ ໔໖
ວ່າດ້ວຍພຣະພັດຕຸດເທສະກະຊົ່ວແລະດີ ........ ໔໖
**໓. ອຸຣຸເວລະວັກ** ........ ໔໘
ໝວດວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ ........ ໔໘
໑. ປະຖະມະອຸຣຸເວລະສູດ ........ ໔໘
ວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ ສູດທີ ໑ ........ ໔໘
໒. ທຸຕິຍະອຸຣຸເວລະສູດ ........ ໓໐
ວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ ສູດທີ ໒ ........ ໓໐
໓. ໂລກະສູດ ........ ໓໒
ວ່າດ້ວຍໂລກ ........ ໓໒
ວ່າດ້ວຍພຸດທະກິດໃນກາລະກາຣາມ ........ ໓໓
໕. ພົມຈະຣິຍະສູດ ........ ໓໕
ວ່າດ້ວຍການປະພຶດພົມມະຈັນ ........ ໓໕
໖. ກຸຫະສູດ ........ ໓໕
ວ່າດ້ວຍພິກຂຸຜູ້ຫຼອກລວງ ........ ໓໕
໗. ສັນຕຸດຖີສູດ ........ ໓໖
ວ່າດ້ວຍຄວາມສັນໂດດດ້ວຍປັດໄຈ ໔ ........ ໓໖
໘. ອະຣິຍະວັງສະສູດ ........ ໓໗
ວ່າດ້ວຍອະຣິຍະວົງ ........ ໓໗
໑໐. ປະຣິບພາຊະກະສູດ ........ ໔໐
ວ່າດ້ວຍປະຣິພາຊົກ ........ ໔໐
**໔. ຈັກກະວັກ** ........ ໔໒

ໝວດວ່າດ້ວຍຈັກ ........ ໔໘
໑. ຈັກກະສູດ ........ ໔໘
ວ່າດ້ວຍຈັກ ໔ ປະການ ........ ໔໘
໒. ສັງຄະຫະສູດ ........ ໔໙
ວ່າດ້ວຍສັງຄະຫະວັດຖຸ ........ ໔໙
໓. ສີຫະສູດ ........ ໔໔
ວ່າດ້ວຍພະຍາຣາດຊະສີ ........ ໔໔
໕. ວັດສະກາຣະສູດ ........ ໔໗
ວ່າດ້ວຍວັດສະການພາມ ........ ໔໗
໖. ໂທນະສູດ ........ ໔໙
ວ່າດ້ວຍໂທນະພາມ ........ ໔໙
໗. ອະປະຣິຫານິຍະສູດ ........ ໕໑
ວ່າດ້ວຍອະປະຣິຫານິຍະທຳ ........ ໕໑
**໕. ໂຣຫິຕັດສະວັກ** ........ ໕໗
ໝວດວ່າດ້ວຍໂຣຫິຕັດສະເທບພະບຸດ ........ ໕໗
໑. ສະມາທິພາວະນາສູດ ........ ໕໗
ວ່າດ້ວຍສະມາທິພາວະນາ ........ ໕໗
໓. ປະຖະມະໂກທະຄະຣຸສູດ ........ ໖໐
ວ່າດ້ວຍບຸກຄົນຜູ້ມັກໂກດ ສູດທີ ໑ ........ ໖໐
໔. ທຸຕິຍະໂກທະຄະຣຸສູດ ........ ໖໑
໕. ໂຣຫິຕັດສະສູດ ........ ໖໔
ວ່າດ້ວຍໂຣຫິຕັດສະເທບພະບຸດ ........ ໖໔
໗. ສຸວິທູຣະສູດ ........ ໖໕
ວ່າດ້ວຍສິ່ງທີ່ຢູ່ຫ່າງໄກກັນເຫຼືອເກີນ ........ ໖໕
໘. ວິສາຂະສູດ ........ ໖໖
ວ່າດ້ວຍການສະແດງທຳຂອງວິສາຂະປັນຈາລິບຸດ ........ ໖໖
໙. ວິປັນລາສະສູດ ........ ໖໗
ວ່າດ້ວຍວິປະລາດ ........ ໖໗
໑໐. ອຸປັກກິເລສະສູດ ........ ໖໘
ວ່າດ້ວຍສິ່ງມົວໝອງ ........ ໖໘

**໔. ທຸຕິຍະປັນນາດ** ........ ໗໑

**໑. ປຸນຍາພິສັນທະວັກ** ........ ໗໑
ໝວດວ່າດ້ວຍທ້ອງບຸນກຸສົນ ........ ໗໑
໑. ປະຖົມປຸນຍາພິສັນທະສູດ ........ ໗໑
ວ່າດ້ວຍທ້ອງບຸນກຸສົນ ສູດທີ ໑ ........ ໗໑
໒. ທຸຕິຍະປຸນຍາພິສັນທະສູດ ........ ໗໒
ວ່າດ້ວຍທ້ອງບຸນກຸສົນ ສູດທີ ໒ ........ ໗໒
໓. ປະຖະມະສັງວາສະສູດ ........ ໗໔
ວ່າດ້ວຍການຢູ່ຮ່ວມກັນ ສູດທີ ໑ ........ ໗໔
໔. ທຸຕິຍະສັງວາສະສູດ ........ ໗໖
ວ່າດ້ວຍການຢູ່ຮ່ວມກັນ ສູດທີ ໒ ........ ໗໖
໕. ປະຖະມະສະມະຊີວີສູດ ........ ໗໙
ວ່າດ້ວຍຜູ້ມີທຳເປັນເຄື່ອງຢູ່ສະເໝີກັນ ສູດທີ ໑ ........ ໗໙
໗. ສຸບປະວາສາສູດ ........ ໘໐
ວ່າດ້ວຍສຸບປະວາສາໂກລິຍະທິດາ ........ ໘໐
໘. ສຸທັດຕະສູດ ........ ໘໒
ວ່າດ້ວຍສຸທັດຕະຄະຫະບໍດີ ........ ໘໒
໙. ໂພຊະນະສູດ ........ ໘໒
ວ່າດ້ວຍທາຍົກຜູ້ໃຫ້ໂພຊະນະ ........ ໘໒
໑໐. ຄິຫິສາມີຈິສູດ ........ ໘໓
ວ່າດ້ວຍການປະຕິບັດປະຕິປະທາທີ່ເໝາະສົມແກ່ຄະລືຫັດ ........ ໘໓
**໒. ປັດຕະກຳມະວັກ** ........ ໘໕
ໝວດວ່າດ້ວຍກຳອັນສົມຄວນ ........ ໘໕
໑. ປັດຕະກຳມະສູດ ........ ໘໕
ວ່າດ້ວຍກຳອັນສົມຄວນ ........ ໘໕
ວ່າດ້ວຍສຸກເກີດຈາກຄວາມບໍ່ເປັນໜີ້ ........ ໘໙
໓. ພົມສູດ ........ ໙໑
ວ່າດ້ວຍສະກຸນທີ່ມີພົມ ........ ໙໑
໔. ນິຣະຍະສູດ ........ ໙໑
ວ່າດ້ວຍທຳເປັນເຫດໃຫ້ເກີດໃນນະຣົກ ........ ໙໑
໕. ຮູບປະສູດ ........ ໙໒
ວ່າດ້ວຍບຸກຄົນຜູ້ຖືຮູບເປັນປະມານ ........ ໙໒

໖. ສະຣາຄະສູດ ........................................................ ໙໓
ວ່າດ້ວຍບຸກຄົນຜູ້ມີຣາຄະ ........................................................ ໙໓
໗. ອະທິຣາຊະສູດ ........................................................ ໙໔
ວ່າດ້ວຍຕະກູນພະຍາງູ ........................................................ ໙໔
໘. ເທວະທັດຕະສູດ ........................................................ ໙໕
ວ່າດ້ວຍພຣະເທວະທັດ ........................................................ ໙໕
໙. ປະທານະສູດ ........................................................ ໙໖
ວ່າດ້ວຍປະທານ ........................................................ ໙໖
໑໐. ອະທຳມິກະສູດ ........................................................ ໙໗
ວ່າດ້ວຍພຣະຣາຊາຜູ້ບໍ່ຕັ້ງຢູ່ໃນທຳແລະຜູ້ຕັ້ງຢູ່ໃນທຳ ........................................................ ໙໗
**໓. ອະປັນນະກະວັກ** ........................................................ ໑໐໐
ໝວດວ່າດ້ວຍຂໍ້ປະຕິບັດທີ່ບໍ່ຜິດ ........................................................ ໑໐໐
໑. ປະທານະສູດ ........................................................ ໑໐໐
ວ່າດ້ວຍຄວາມພຽນເປັນເຫດໝົດສິ້ນອາສະວະ ........................................................ ໑໐໐
໓. ສັບປຸຣິສະສູດ ........................................................ ໑໐໑
ວ່າດ້ວຍທຳຂອງອະສັດຕະບຸຣຸດແລະສັດຕະບຸຣຸດ ........................................................ ໑໐໑
໔. ປະຖະມະອັກຄະສູດ ........................................................ ໑໐໓
ວ່າດ້ວຍທຳອັນເລີດ ສູດທີ ໑ ........................................................ ໑໐໓
໕. ທຸຕິຍະອັກຄະສູດ ........................................................ ໑໐໓
ວ່າດ້ວຍທຳອັນເລີດ ສູດທີ ໔ ........................................................ ໑໐໓
໖. ກຸສິນາຣະສູດ ........................................................ ໑໐໔
ວ່າດ້ວຍພຸດທະກິດໃນເມືອງກຸສິນາຣາ ........................................................ ໑໐໔
໗. ອະຈິນເຕັຍຍະສູດ ........................................................ ໑໐໕
ວ່າດ້ວຍອະຈິນໄຕ ........................................................ ໑໐໕
໘. ທັກຂິນະສູດ ........................................................ ໑໐໕
ວ່າດ້ວຍຄວາມບໍລິສຸດແຫ່ງທັກຂິນາ ........................................................ ໑໐໕
໙. ວະນິດຊະສູດ ........................................................ ໑໐໖
ວ່າດ້ວຍເຫດໃຫ້ການຄ້າຂາຍຂາດທຶນຫຼືໄດ້ກຳໄລ ........................................................ ໑໐໖
໑໐. ກຳໂພຊະສູດ ........................................................ ໑໐໗
ວ່າດ້ວຍເຫດໃຫ້ມາຕຸຄາມໄປແຄວັນກຳໂພຊະບໍ່ໄດ້ ........................................................ ໑໐໗
**໔. ມະຈະລະວັກ** ........................................................ ໑໐໘

ໝວດວ່າດ້ວຍສະມະນະຜູ້ບໍ່ຫວັ່ນໄຫວ ........ ໑໐໗
໑. ປານາຕິປາຕະສູດ ........ ໑໐໗
ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ ........ ໑໐໗
໒. ມຸສາວາທະສູດ ........ ໑໐໙
ວ່າດ້ວຍຜູ້ເວົ້າຕົວະແລະຜູ້ເວັ້ນຂາດຈາກການເວົ້າຕົວະ ........ ໑໐໙
໓. ອະວັນນາຣະຫະສູດ ........ ໑໑໐
ວ່າດ້ວຍຜູ້ກ່າວສັນເສີນຜູ້ຄວນຕິຕຽນແລະຜູ້ກ່າວຕິຕຽນຜູ້ຄວນຕິຕຽນ ........ ໑໑໐
໔. ໂກທະຄະຣຸສູດ ........ ໑໑໑
ວ່າດ້ວຍຜູ້ມັກໂກດແລະຜູ້ບໍ່ມັກໂກດ ........ ໑໑໑
໕. ຕະໂມຕະມະສູດ ........ ໑໑໒
ວ່າດ້ວຍຜູ້ມືດມາແລະມືດໄປ ........ ໑໑໒
໖. ໂອນະໂຕນະຕະສູດ ........ ໑໑໓
ວ່າດ້ວຍຜູ້ຕ່ຳມາແລະຕ່ຳໄປ ........ ໑໑໓
໗. ປຸດຕະສູດ ........ ໑໑໔
ວ່າດ້ວຍສະມະນະຜູ້ບໍ່ຫວັ່ນໄຫວເໝືອນພຣະຣາດຊະໂອຣົດອົງອ້າຍ ........ ໑໑໔
໘. ສັງໂຍຊະນະສູດ ........ ໑໑໖
ວ່າດ້ວຍຜູ້ໝົດສິ້ນສັງໂຍດ ........ ໑໑໖
໙. ສຳມາທິດຖິສູດ ........ ໑໑໗
ວ່າດ້ວຍຜູ້ເປັນສຳມາທິດຖິ ........ ໑໑໗
໑໐. ຂັນທະສູດ ........ ໑໑໙
ວ່າດ້ວຍຜູ້ພິຈາລະນາເຫັນຄວາມເກີດແລະຄວາມດັບໃນອຸປາທານຂັນ ........ ໑໑໙
**໕. ອະສຸຣະວັກ** ........ ໑໒໐
ໝວດວ່າດ້ວຍບຸກຄົນຄືອະສູນແລະເທວະດາ ........ ໑໒໐
໑. ອະສຸຣະສູດ ........ ໑໒໐
ວ່າດ້ວຍບຸກຄົນຄືອະສູນແລະເທວະດາ ........ ໑໒໐
໒. ປະຖະມະສະມາທິສູດ ........ ໑໒໑
໓. ທຸຕິຍະສະມາທິສູດ ........ ໑໒໒
ວ່າດ້ວຍສະມາທິ ສູດທີ ໒ ........ ໑໒໒
໔. ຕະຕິຍະສະມາທິສູດ ........ ໑໒໓
ວ່າດ້ວຍສະມາທິ ສູດທີ ໓ ........ ໑໒໓
໕. ສະວາລາຕະສູດ ........ ໑໒໕

ວ່າດ້ວຍບຸກຄົນປຽບຄືທ່ອນໄມ້ທີ່ຖືກຖິ້ມໄວ້ໃນປ່າຊ້າ ........ ໑໔໕
໖. ຣາຄະວິນຍະສູດ ........ ໑໔໖
ວ່າດ້ວຍບຸກຄົນຜູ້ປະຕິບັດເພື່ອກຳຈັດຣາຄະ ........ ໑໔໖
໗. ຂິບປະນິສັນຕິສູດ ........ ໑໔໗
ວ່າດ້ວຍບຸກຄົນຜູ້ຮູ້ໄດ້ໄວ ........ ໑໔໗
໙. ອັດຕະຫິຕະສູດ ........ ໑໔໙
ວ່າດ້ວຍບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ........ ໑໔໙
໑໐. ໂປຕະລິຍະສູດ ........ ໑໖໑
ວ່າດ້ວຍປະຣິພາຊົກຊື່ໂປຕະລິຍະ ........ ໑໖໑

**໖. ຕະຕິຍະປັນນາດ** ........ ໑໖໔

**໑. ວະລາຫະກະວັກ** ........ ໑໖໔
ໝວດວ່າດ້ວຍບຸກຄົນປຽບຄືກ້ອນເພື້ອ ........ ໑໖໔
໑. ປະຖະມະວະລາຫະກະສູດ ........ ໑໖໔
ວ່າດ້ວຍບຸກຄົນປຽບຄືກ້ອນເພື້ອ ສູດທີ ໑ ........ ໑໖໔
໘. ທຸຕິຍະວະລາຫະກະສູດ ........ ໑໖໕
ວ່າດ້ວຍບຸກຄົນປຽບຄືກ້ອນເພື້ອ ສູດທີ ໘ ........ ໑໖໕
໖. ກຸມພະສູດ ........ ໑໖໗
ວ່າດ້ວຍບຸກຄົນປຽບຄືໝໍ້ ........ ໑໖໗
໔. ອຸທະກະຣະຫະທະສູດ ........ ໑໖໙
ວ່າດ້ວຍບຸກຄົນປຽບຄືຫ້ວງນ້ຳ ........ ໑໖໙
໕. ອຳພະສູດ ........ ໑໔໐
ວ່າດ້ວຍບຸກຄົນປຽບຄືໝາກມ່ວງ ........ ໑໔໐
໙. ພະລິວັດທະສູດ ........ ໑໔໔
ວ່າດ້ວຍບຸກຄົນປຽບຄືງົວເຖິກ ........ ໑໔໔
໑໐. ອາສີວິສະສູດ ........ ໑໔໗
ວ່າດ້ວຍບຸກຄົນປຽບຄືອະສໍຣະພິດ ........ ໑໔໗

**໘. ເກສີວັກ** ........ ໑໔໙
ໝວດວ່າດ້ວຍເກສີສາຣະຖີຜູ້ເຝິກມ້າ ........ ໑໔໙
໑. ເກສີສູດ ........ ໑໔໙
ວ່າດ້ວຍເກສີສາຣະຖີຜູ້ເຝິກມ້າ ........ ໑໔໙
໘. ຊະວະສູດ ........ ໑໕໑

ວ່າດ້ວຍຄວາມວ່ອງໄວຂອງມ້າຕົ້ນແລະຂອງພິກຂຸ ........ ໑໕໑
໓. ປະໂຕທະສູດ ........ ໑໕໔
ວ່າດ້ວຍເຫຼັກແຫຼມຂອງສາຣະຖີ........ ໑໕໔
໔. ນາຄະສູດ........ ໑໕໔
ວ່າດ້ວຍອົງຂອງຊ້າງຕົ້ນ ........ ໑໕໔
໕. ຖານະສູດ........ ໑໕໖
ວ່າດ້ວຍຖານະແຫ່ງຄວາມເສື່ອມແລະຄວາມຈະເລີນ........ ໑໕໖
໖. ອັບປະມາທະສູດ........ ໑໕໗
ວ່າດ້ວຍຄວາມບໍ່ຜະໝາດ ........ ໑໕໗
໗. ອາຣັກຂະສູດ ........ ໑໕໗
ວ່າດ້ວຍສະຕິເຄື່ອງຖືຮັກສາ ........ ໑໕໗
໘. ສັງເວຊະນີຍະສູດ........ ໑໕໙
ວ່າດ້ວຍສັງເວຊະນີຍະສະຖານ ........ ໑໕໙
໙. ປະຖົມພະຍະສູດ........ ໑໖໐
ວ່າດ້ວຍໄພພາຍໃນ ສູດທີ ໑........ ໑໖໐
໑໐. ທຸຕິຍະພະຍະສູດ ........ ໑໖໐
ວ່າດ້ວຍໄພພາຍນອກ ສູດທີ ໒........ ໑໖໐
**໓. ພະຍະວັກ**........ ໑໖໑
ໝວດວ່າດ້ວຍໄພ........ ໑໖໑
໑. ອັດຕານຸວາທະສູດ........ ໑໖໑
ວ່າດ້ວຍອັດຕານຸວາທະໄພ........ ໑໖໑
໒. ອູມິພະຍະສູດ........ ໑໖໓
ວ່າດ້ວຍໄພຈາກຄື້ນ ........ ໑໖໓
ວ່າດ້ວຍເຫດທີ່ເຮັດໃຫ້ບຸກຄົນຕ່າງກັນ ສູດທີ ໑........ ໑໖໕
໔. ທຸຕິຍະນານາກະຣະນະສູດ ........ ໑໖໗
ວ່າດ້ວຍເຫດທີ່ເຮັດໃຫ້ບຸກຄົນຕ່າງກັນ ສູດທີ ໒........ ໑໖໗
໕. ປະຖົມເມດຕາສູດ ........ ໑໖໘
ວ່າດ້ວຍຜູ້ມີເມດຕາຈິດ ສູດທີ ໑........ ໑໖໘
໖. ທຸຕິຍະເມດຕາສູດ ........ ໑໗໐
ວ່າດ້ວຍຜູ້ມີເມດຕາຈິດ ສູດທີ ໒........ ໑໗໐
໗. ປະຖົມຕະຖາຄົດອັດສະຣິຍະສູດ........ ໑໗໑

ວ່າກດ້ວຍເຫດອັດສະຈັນຂອງພຣະຕະຖາຄົດ ສູດທີ ໑ .................................. ໑໗໑
໘. ທຸຕິຍະຕະຖາຄົດອັດສະຣິຍະສູດ.................................................................. ໑໗໓
ວ່າດ້ວຍເຫດອັດສະຈັນຂອງພຣະຕະຖາຄົດ ສູດທີ ໒ ................................... ໑໗໓
ທຸຕິຍະຕະຖາຄົດອັດສະຣິຍະສູດທີ ໘ ຈົບ ..................................................... ໑໗໓
໙. ອານັນທະອັດສະຣິຍະສູດ.......................................................................... ໑໗໔
ວ່າດ້ວຍຄວາມເປັນອັດສະຣິຍະຂອງພຣະອານົນ ............................................ ໑໗໔
**໔. ປຸກຄະລະວັກ**..................................................................................... ໑໗໖
ໝວດວ່າດ້ວຍບຸກຄົນ.................................................................................. ໑໗໖
໑. ສັງໂຍຊະນະສູດ ..................................................................................... ໑໗໖
ວ່າດ້ວຍບຸກຄົນຜູ້ລະສັງໂຍດໄດ້.................................................................. ໑໗໖
໒. ປະຕິພານສູດ ......................................................................................... ໑໗໗
ວ່າດ້ວຍບຸກຄົນຜູ້ຕອບໄດ້ຖືກຕ້ອງ .............................................................. ໑໗໗
໓. ອຸກຄະຕິຕັນຍູສູດ .................................................................................... ໑໗໘
ວ່າດ້ວຍບຸກຄົນຜູ້ເຂົ້າໃຈໄດ້ທັນທີ ................................................................ ໑໗໘
໔. ອຸດຖານະຜະລະສູດ.................................................................................. ໑໗໘
ວ່າດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ........................................................ ໑໗໘
ອຸດຖານະຜະລະສູດທີ ໔ ຈົບ........................................................................ ໑໗໙
໕. ສາວັດຊະສູດ ......................................................................................... ໑໗໙
ວ່າດ້ວຍບຸກຄົນຜູ້ມີແຕ່ໂທດ.......................................................................... ໑໗໙
໖. ປະຖົມສີລະສູດ....................................................................................... ໑໘໐
໗. ທຸຕິຍະສີລະສູດ....................................................................................... ໑໘໑
ວ່າດ້ວຍສີນ ສູດທີ ໒ .................................................................................. ໑໘໑
ທຸຕິຍະສີລະສູດທີ ໗ ຈົບ.............................................................................. ໑໘໑
໘. ນິກກັດຖະສູດ.......................................................................................... ໑໘໑
ວ່າດ້ວຍບຸກຄົນຜູ້ມີກາຍແລະຈິດອອກ............................................................ ໑໘໑
໙. ທຳມະກະຖິກະສູດ.................................................................................... ໑໘໒
ວ່າດ້ວຍທຳມະກະຖຶກ ................................................................................. ໑໘໒
໑໐. ວາທີສູດ................................................................................................ ໑໘໓
ວ່າດ້ວຍນັກເວົ້າ.......................................................................................... ໑໘໓
**໕. ອາພາວັກ**......................................................................................... ໑໘໔
ໝວດວ່າດ້ວຍແສງສະຫວ່າງ.......................................................................... ໑໘໔

໑. ອາພາສູດ ........................................ ໑໗໔
ວ່າດ້ວຍແສງສະຫວ່າງ ........................................ ໑໗໔
໒. ອາໂລກະສູດ ........................................ ໑໗໕
ວ່າດ້ວຍຄວາມສະຫວ່າງ ........................................ ໑໗໕
ວ່າດ້ວຍຄວາມຮຸ່ງເຮືອງ ........................................ ໑໗໖
໖. ປະຖົມກາລະສູດ ........................................ ໑໗໗
ວ່າດ້ວຍການ ສູດທີ ໑ ........................................ ໑໗໗
ປະຖົມກາລະສູດທີ ໖ ຈົບ ........................................ ໑໗໗
໗. ທຸຕິຍະກາລະສູດ ........................................ ໑໗໗
ວ່າດ້ວຍການ ສູດທີ ໔ ........................................ ໑໗໗
໘. ທຸດຈະຣິຕະສູດ ........................................ ໑໗໘
໙. ສຸດຈະຣິຕະສູດ ........................................ ໑໗໘
ວ່າດ້ວຍສຸດຈະຣິດ ........................................ ໑໗໘
໑໐. ສາຣະສູດ ........................................ ໑໗໙
ວ່າດ້ວຍສາຣະທຳ ........................................ ໑໗໙

**໔. ຈະຕຸດຖະປັນນາດ** ........................................ ໑໙໐
**໑. ອິນທະຣິຍະວັກ** ........................................ ໑໙໐
ໝວດວ່າດ້ວຍອິນຊີ ........................................ ໑໙໐
໑. ອິນທະຣິຍະສູດ ........................................ ໑໙໐
ວ່າດ້ວຍອິນຊີ ........................................ ໑໙໐
໔. ສັດທາພະລະສູດ ........................................ ໑໙໐
ວ່າດ້ວຍສັດທາພະລະ ........................................ ໑໙໐
໓. ປັນຍາພະລະສູດ ........................................ ໑໙໑
ວ່າດ້ວຍປັນຍາພະລະ ........................................ ໑໙໑
໔. ສະຕິພະລະສູດ ........................................ ໑໙໑
ວ່າດ້ວຍສະຕິພະລະ ........................................ ໑໙໑
໕. ປະຕິສັງຂານະພະລະສູດ ........................................ ໑໙໔
ວ່າດ້ວຍປະຕິສັງຂານະພະລະ ........................................ ໑໙໔
໖. ກັບປະສູດ ........................................ ໑໙໔
ວ່າດ້ວຍກັບ ........................................ ໑໙໔
໗. ໂຣຄະສູດ ........................................ ໑໙໓

ວ່າດ້ວຍພະຍາດ ........ ໑໙໓
໗. ປະຣິຫານີສູດ ........ ໑໙໔
ວ່າດ້ວຍທຳທີ່ເປັນເຫດເສື່ອມ ........ ໑໙໔
໘. ພິກຂຸນີສູດ ........ ໑໙໕
ວ່າດ້ວຍພິກຂຸນີ ........ ໑໙໕
໑໐. ສຸຄະຕະວິນຍະສູດ ........ ໑໙໗
ວ່າດ້ວຍພຣະສຸຄົດເຈົ້າແລະວິໄນຂອງພຣະສຸຄົດເຈົ້າ ........ ໑໙໗
**໒. ປະຕິປະທາວັກ** ........ ໒໐໑
ໝວດວ່າດ້ວຍປະຕິປະທາ ........ ໒໐໑
໑. ສັງຂິດຕະສູດ ........ ໒໐໑
ວ່າດ້ວຍປະຕິປະທາໂດຍຫຍໍ້ ........ ໒໐໑
໒. ວິດຖາຣະສູດ ........ ໒໐໑
ວ່າດ້ວຍປະຕິປະທາໂດຍພິດສະດານ ........ ໒໐໑
໓. ອະສຸພະສູດ ........ ໒໐໓
ວ່າດ້ວຍການພິຈາລະນາເຫັນຄວາມບໍ່ງາມໃນກາຍ ........ ໒໐໓
໔. ປະຖົມຂະມະສູດ ........ ໒໐໕
ວ່າດ້ວຍປະຕິປະທາທີ່ອົດທົນ ສູດທີ ໑ ........ ໒໐໕
໕. ທຸຕິຍະຂະມະສູດ ........ ໒໐໖
໖. ອຸພະຍະສູດ ........ ໒໐໗
ວ່າດ້ວຍປະຕິປະທາທີ່ມີລັກສະນະຄືກັນທັງ ໔ ສ່ວນ ........ ໒໐໗
໗. ມະຫາໂມກຄັນລານະສູດ ........ ໒໐໘
ວ່າດ້ວຍປະຕິປະທາທີ່ເປັນເຫດໃຫ້ຈິດຂອງພຣະມະຫາໂມກຄັນລານະລຸດພົ້ນ ........ ໒໐໘
໘. ສາຣີປຸດຕະສູດ ........ ໒໐໙
ວ່າດ້ວຍປະຕິປະທາທີ່ເປັນເຫດໃຫ້ຈິດຂອງພຣະສາຣີບຸດລຸດພົ້ນ ........ ໒໐໙
໙. ສະສັງຂາຣະສູດ ........ ໒໑໐
ວ່າດ້ວຍຜູ້ເປັນສະສັງຂາຣະປະຣິນິບພາຍີໃນປັດຈຸບັນ ........ ໒໑໐
໑໐. ຍຸຄະນັດທະສູດ ........ ໒໑໒
ວ່າດ້ວຍການຈະເລີນສະມະຖະແລະວິປັດສະນາຄວບຄູ່ກັນໄປ ........ ໒໑໒
**໓. ສັນເຈຕະນິຍະວັກ** ........ ໒໑໔
ໝວດວ່າດ້ວຍຄວາມຈິງໃຈ ........ ໒໑໔
໑. ເຈຕະນາສູດ ........ ໒໑໔

ວ່າດ້ວຍເຈຕະນາ ........ ໔໑໔
໒. ວິພັດຕິສູດ ........ ໔໑໖
ວ່າດ້ວຍການຈຳແນກປະຕິສຳພິທາ ........ ໔໑໖
໓. ມະຫາໂກດຖິຕະສູດ ........ ໔໑໗
ວ່າດ້ວຍພຣະມະຫາໂກດຖິຕະ ........ ໔໑໗
໔. ອານັນທະສູດ ........ ໔໑໙
ວ່າດ້ວຍພຣະອານົນ ........ ໔໑໙
໕. ອຸປະວານະສູດ ........ ໔໒໐
ວ່າດ້ວຍພຣະອຸປະວານະ ........ ໔໒໐
໖. ອາຍາຈະນະສູດ ........ ໔໒໑
ວ່າດ້ວຍຄວາມປາຖະໜາໂດຍຖືກຕ້ອງ ........ ໔໒໑
໗. ຣາຫຸລະສູດ ........ ໔໒໒
ວ່າດ້ວຍພຣະຣາຫຸນ ........ ໔໒໒
໘. ຊຳພາລີສູດ ........ ໔໒໓
ວ່າດ້ວຍບຸກຄົນຜູ້ປຽບດ້ວຍນ້ຳສ້າງໃຫຍ່ ........ ໔໒໓
໙. ນິບພານະສູດ ........ ໔໒໔
ວ່າດ້ວຍນິບພານ ........ ໔໒໔
໑໐. ມະຫາປະເທສະສູດ[1] ........ ໔໒໕
ວ່າດ້ວຍມະຫາປະເທດ ........ ໔໒໕
**໔. ໂຍທາຊີວະວັກ** ........ ໔໒໘
ໝວດວ່າດ້ວຍອົງປະກອບຂອງນັກຮົບອາຊີບ ........ ໔໒໘
໑. ໂຍທາຊີວະສູດ ........ ໔໒໘
ວ່າດ້ວຍອົງປະກອບຂອງນັກຮົບອາຊີບ ........ ໔໒໘
໒. ປາຕິໂພຄະສູດ ........ ໔໓໐
ວ່າດ້ວຍທຳທີ່ບໍ່ມີໃຜປະກັນໄດ້ ........ ໔໓໐
໓. ສຸຕະສູດ ........ ໔໓໐
ວ່າດ້ວຍສິ່ງທີ່ໄດ້ຟັງ ........ ໔໓໐
໔. ອະພະຍະສູດ ........ ໔໓໒
ວ່າດ້ວຍບຸກຄົນຜູ້ຢ້ານຕາຍແລະຜູ້ບໍ່ຢ້ານຄວາມຕາຍ ........ ໔໓໒
ວ່າດ້ວຍສັດຈະທີ່ເປັນເຫດໃຫ້ບໍ່ສຳຄັນຕົນວ່າເປັນສະມະນະ ........ ໔໓໔
໕. ອຸມມັກຄະສູດ ........ ໔໓໖

ວ່າດ້ວຍຜູ້ມີປັນຍາໃຝ່ຮູ້ ........ ໔໖໖
໗. ວັດສະກາຣະສູດ ........ ໔໖໗
໑໐. ອຸໂປສະຖະສູດ ........ ໔໘໖
ວ່າດ້ວຍຊົງສັນເສີນພິກຂຸໃນມື້ອຸໂປສົດ ........ ໔໘໖
໔. ມະຫາວັກ ........ ໔໘໔
ໝວດວ່າດ້ວຍເລື້ອງໃຫຍ່ ........ ໔໘໔
໑. ໂສຕານຸຄະຕະສູດ ........ ໔໘໔
ວ່າດ້ວຍທຳທີ່ເຂົ້າເຖິງໂສຕະປະສາດ ........ ໔໘໔
໔. ຖານະສູດ ........ ໔໘໗
ວ່າດ້ວຍຖານະທີ່ເພິ່ງຮູ້ດ້ວຍຖານະ ........ ໔໘໗
໖. ພັດທິຍະສູດ[1] ........ ໔໕໐
ວ່າດ້ວຍເຈົ້າລິດສະຫວີພຣະນາມວ່າພັດທິຍະ ........ ໔໕໐
໔. ວັບປະສູດ ........ ໔໕໗
ວ່າດ້ວຍເຈົ້າສາກະຍະພຣະນາມວ່າວັບປະ ........ ໔໕໗
໖. ສາລະຫະສູດ ........ ໔໖໔
ວ່າດ້ວຍເຈົ້າລິດສະຫວີພຣະນາມວ່າສາລະຫະ ........ ໔໖໔
໗. ມັນລິກາເທວີສູດ ........ ໔໖໔
ວ່າດ້ວຍພຣະນາງມັນລິກາເທວີ ........ ໔໖໔
໗. ອັດຕັນຕະປະສູດ ........ ໔໖໗
ວ່າດ້ວຍບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ........ ໔໖໗
໙. ຕັນຫາສູດ ........ ໔໗໔
ວ່າດ້ວຍຕັນຫາ ........ ໔໗໔
໑໐. ເປມະສູດ ........ ໔໗໗
ວ່າດ້ວຍຄວາມຮັກແລະຄວາມຊັງ ........ ໔໗໗

໔. ປັນຈະມະປັນນາດ ........ ໔໗໖
໑. ສັບປຸຣິສະວັກ ........ ໔໗໖
ໝວດວ່າດ້ວຍສັດຕະບຸຣຸດ ........ ໔໗໖
໑. ສິກຂາປະທະສູດ ........ ໔໗໖
ວ່າດ້ວຍສິກຂາບົດ ........ ໔໗໖
໔. ອັດສັດທະສູດ ........ ໔໗໔
ວ່າດ້ວຍຜູ້ບໍ່ມີສັດທາແລະຜູ້ມີສັດທາ ........ ໔໗໔

໓. ສັດຕະກຳມະສູດ.................................................................... ໔໗໕
ວ່າດ້ວຍກຳ ໗ ປະການ ........................................................................ ໔໗໕
໔. ທະສະກຳມະສູດ.................................................................... ໔໗໖
ວ່າດ້ວຍກຳ ໑໐ ປະການ ........................................................................ ໔໗໖
໕. ອັດຖັງຄິກະສູດ.................................................................... ໔໗໗
ວ່າດ້ວຍມັກມີອົງ ໘.................................................................... ໔໗໗
໖. ທະສະມັກຄະສູດ.................................................................... ໔໗໙
ວ່າດ້ວຍມັກ ໑໐ ປະການ.................................................................... ໔໗໙
໗. ປະຖົມປາປະທຳມະສູດ .................................................................... ໔໗໙
ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໑ .................................................................... ໔໗໙
໘. ທຸຕິຍະປາປະທຳມະສູດ .................................................................... ໔໙໐
ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໒ .................................................................... ໔໙໐
໙. ຕະຕິຍະປາປະທຳມະສູດ .................................................................... ໔໙໑
ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໓ .................................................................... ໔໙໑
໑໐. ຈະຕຸດຖະປາປະທຳມະສູດ .................................................................... ໔໙໒
ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໔ .................................................................... ໔໙໒
**໔. ໂສພະນະວັກ**.................................................................... ໔໙໓
ໝວດວ່າດ້ວຍຜູ້ເຮັດບໍລິສັດໃຫ້ງາມ .................................................................... ໔໙໓
໑. ປະຣິສາສູດ.................................................................... ໔໙໓
ວ່າດ້ວຍບໍລິສັດ .................................................................... ໔໙໓
໒. ທິດຖິສູດ .................................................................... ໔໙໔
ວ່າດ້ວຍທິດຖິ.................................................................... ໔໙໔
໓. ອະກະຕັນຍຸຕາສູດ.................................................................... ໔໙໕
ວ່າດ້ວຍຄວາມເປັນຜູ້ບໍ່ຮູ້ຄຸນແລະຄວາມເປັນຜູ້ຮູ້ຄຸນ.................................................................... ໔໙໕
໔. ປານາຕິປາຕິສູດ .................................................................... ໔໙໖
ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ .................................................................... ໔໙໖
໕. ປະຖົມມັກຄະສູດ.................................................................... ໔໙໖
ວ່າດ້ວຍມັກ ສູດທີ ໑ .................................................................... ໔໙໖
໖. ທຸຕິຍະມັກຄະສູດ .................................................................... ໔໙໗
ວ່າດ້ວຍມັກ ສູດທີ ໒ .................................................................... ໔໙໗
໗. ປະຖົມໂວຫາຣະປະຖະສູດ .................................................................... ໔໙໘

ວ່າດ້ວຍຄັນລອງແຫ່ງໂອຫານ ສູດທີ ໑ ........ ໔໙໗
໗. ທຸຕິຍະໂອຫາຣະປະຖະສູດ ........ ໔໙໗
ວ່າດ້ວຍຄັນລອງແຫ່ງໂອຫານ ສູດທີ ໒ ........ ໔໙໗
໑໐. ທຸດສີລະສູດ ........ ໔໙໙
ວ່າດ້ວຍຜູ້ທຸສິນແລະຜູ້ມີສິນ ........ ໔໙໙
**໓. ທຸດຈະຣິຕະວັກ** ........ ໕໐໑
ໝວດວ່າດ້ວຍທຸດຈະຣິດແລະສຸດຈະຣິດ ........ ໕໐໑
໑. ທຸດຈະຣິຕະສູດ ........ ໕໐໑
ວ່າດ້ວຍທຸດຈະຣິດແລະສຸດຈະຣິດ ........ ໕໐໑
໒. ທິດຖິສູດ ........ ໕໐໑
ວ່າດ້ວຍທິດຖິ ........ ໕໐໑
໓. ອະກະຕັນຍຸຕາສູດ ........ ໕໐໒
ວ່າດ້ວຍຄວາມເປັນຜູ້ບໍ່ຮູ້ຄຸນແລະຄວາມເປັນຜູ້ຮູ້ຄຸນ ........ ໕໐໒
໔. ປານາຕິປາຕິສູດ ........ ໕໐໓
ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ ........ ໕໐໓
໕. ປະຖົມມັກຄະສູດ ........ ໕໐໔
ວ່າດ້ວຍມັຄ ສູດທີ ໑ ........ ໕໐໔
໗. ປະຖົມໂອຫາຣະປະຖະສູດ ........ ໕໐໕
ວ່າດ້ວຍຄັນລອງແຫ່ງໂອຫານ ສູດທີ ໑ ........ ໕໐໕
໗. ທຸຕິຍະໂອຫາຣະປະຖະສູດ ........ ໕໐໕
ວ່າດ້ວຍຄັນລອງແຫ່ງໂອຫານ ສູດທີ ໒ ........ ໕໐໕
໙. ອະຫິຣິກະສູດ ........ ໕໐໖
ວ່າດ້ວຍຜູ້ບໍ່ມີຫິຣິແລະຜູ້ມີຫິຣິ ........ ໕໐໖
໑໐. ທຸບປັນຍະສູດ ........ ໕໐໖
ວ່າດ້ວຍຜູ້ມີປັນຍາຊາມແລະຜູ້ມີປັນຍາດີ ........ ໕໐໖
໑໑. ກະວິສູດ ........ ໕໐໗
ວ່າດ້ວຍກະວິ ........ ໕໐໗
**໔. ກຳມະວັກ** ........ ໕໐໗
ໝວດວ່າດ້ວຍກຳ ........ ໕໐໗
໑. ສັງຂິດຕະສູດ ........ ໕໐໗
ວ່າດ້ວຍກຳແລະວິບາກແຫ່ງກຳໂດຍຫຍໍ້ ........ ໕໐໗

໔. ວິດຖາຣະສູດ ........ ໓໐໗
ວ່າດ້ວຍກຳແລະວິບາກແຫ່ງກຳໂດຍພິດສະດານ ........ ໓໐໗
໓. ໂສນະກາຍະນະສູດ ........ ໓໑໐
ວ່າດ້ວຍມານົບຊື່ໂສນະກາຍະນະ ........ ໓໑໐
໔. ປະຖົມສິກຂາປະທະສູດ ........ ໓໑໔
ວ່າດ້ວຍສິກຂາບົດ ສູດທີ ໑ ........ ໓໑໔
໖. ອະຣິຍະມັກຄະສູດ ........ ໓໑໔
ວ່າດ້ວຍອະຣິຍະມັກ ........ ໓໑໔
໗. ໂພດຊັງຄະສູດ ........ ໓໑໕
ວ່າດ້ວຍໂພດຊົງ ........ ໓໑໕
໙. ອັບພະຍາປັດຊະສູດ ........ ໓໑໗
ວ່າດ້ວຍກຳແລະທິດຖິທີ່ບໍ່ມີຄວາມບຽດບຽນ ........ ໓໑໗
໑໐. ສະມະນະສູດ ........ ໓໑໘
ວ່າດ້ວຍສະມະນະ ........ ໓໑໘
໑໑. ສັບປຸຣິສານິສັງສະສູດ ........ ໓໑໙
ວ່າດ້ວຍອານິສົງທີ່ເພິ່ງໄດ້ຈາກສັດຕະບຸຣຸດ ........ ໓໑໙
**໕. ອາປັດຕິພະຍະວະວັກ** ........ ໓໔໐
ໝວດວ່າດ້ວຍອາປັດຕິໄພ ........ ໓໔໐
໑. ສັງຄະເພທະກະສູດ ........ ໓໔໐
ວ່າດ້ວຍພິກຂຸຜູ້ທຳລາຍສົງ ........ ໓໔໐
໔. ອາປັດຕິພະຍະສູດ ........ ໓໔໔
ວ່າດ້ວຍອາປັດຕິໄພ ........ ໓໔໔
໓. ສິກຂານິສັງສະສູດ ........ ໓໔໔
ວ່າດ້ວຍພົມມະຈັນມີສິກຂາເປັນອານິສົງ ........ ໓໔໔
໔. ເສີຍຍາສູດ ........ ໓໔໕
ວ່າດ້ວຍການນອນ ........ ໓໔໕
໕. ຖູປາຣະຫະສູດ ........ ໓໔໖
ວ່າດ້ວຍຖູປາຣະຫະບຸກຄົນ ........ ໓໔໖
໖. ປັນຍາວຸດທິສູດ ........ ໓໔໖
ວ່າດ້ວຍຄວາມຈະເລີນດ້ວຍປັນຍາ ........ ໓໔໖
໗. ພະຫຸກາຣະສູດ ........ ໓໔໗

ວ່າດ້ວຍທຳມີອຸປະກາຣະຫຼາຍ ........ ໓໒໗
໘. ປະຖົມໂອຫາຣະສູດ[1] ........ ໓໒໗
ວ່າດ້ວຍໂອຫານ ສູດທີ ໑ ........ ໓໒໗
໙. ທຸຕິຍະໂອຫາຣະສູດ[1] ........ ໓໒໘
ວ່າດ້ວຍໂອຫານ ສູດທີ ໒ ........ ໓໒໘
໑໐. ຕະຕິຍະໂອຫາຣະສູດ[2] ........ ໓໒໘
ວ່າດ້ວຍໂອຫານ ສູດທີ ໓ ........ ໓໒໘
໑໑. ຈະຕຸດຖະໂອຫາຣະສູດ[1] ........ ໓໒໙
ວ່າດ້ວຍໂອຫານ ສູດທີ ໔ ........ ໓໒໙
**໖. ອະພິນຍາວັກ** ........ ໓໓໐
ໝວດວ່າດ້ວຍທຳທີ່ຮູ້ຍິ່ງ ........ ໓໓໐
໑. ອະພິນຍາສູດ ........ ໓໓໐
ວ່າດ້ວຍທຳທີ່ຮູ້ຍິ່ງ ........ ໓໓໐
໒. ປະຣິເຍສະນາສູດ ........ ໓໓໑
ວ່າດ້ວຍການສະແຫວງຫາ ........ ໓໓໑
໓. ສັງຄະຫະວັດຖຸສູດ ........ ໓໓໒
ວ່າດ້ວຍສັງຄະຫະວັດຖຸ ........ ໓໓໒
໔. ມາລຸງກະຍະປຸດຕະສູດ ........ ໓໓໒
ວ່າດ້ວຍພຣະມາລຸງກະຍະບຸດ ........ ໓໓໒
໕. ກຸລະສູດ ........ ໓໓໔
ວ່າດ້ວຍຕະກູນ ........ ໓໓໔
໖. ປະຖົມອາຊານີຍະສູດ ........ ໓໓໕
ວ່າດ້ວຍອົງປະກອບຂອງມ້າອາຊາໄນ ສູດທີ ໑ ........ ໓໓໕
໗. ທຸຕິຍະອາຊານີຍະສູດ ........ ໓໓໖
ວ່າດ້ວຍອົງປະກອບຂອງມ້າອາຊາໄນ ສູດທີ ໒ ........ ໓໓໖
໘. ພະລະສູດ ........ ໓໓໗
ວ່າດ້ວຍພະລະ ........ ໓໓໗
໙. ອະຣັນຍະສູດ ........ ໓໓໘
ວ່າດ້ວຍທຳຂອງພິກຂຸຜູ້ຄວນຢູ່ປ່າແລະບໍ່ຄວນຢູ່ປ່າ ........ ໓໓໘
໑໐. ກຳມະສູດ ........ ໓໓໙
ວ່າດ້ວຍກຳແລະທິດຖິທີ່ມີໂທດ ........ ໓໓໙

**໗. ກຳມະປະຖະວັກ** ........ ໓໔໐
ໝວດວ່າດ້ວຍກຳມະບົດ ........ ໓໔໐
໑. ປານາຕິປາຕິສູດ ........ ໓໔໐
ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ ........ ໓໔໐
໒. ອະທິນນາທາຍີສູດ ........ ໓໔໑
ວ່າດ້ວຍຜູ້ລັກຊັບແລະຜູ້ເວັ້ນຂາດຈາກການລັກຊັບ ........ ໓໔໑
໓. ມິດສາຈາຣີສູດ ........ ໓໔໒
ວ່າດ້ວຍຜູ້ປະພຶດຜິດໃນກາມແລະຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ........ ໓໔໒
໔. ມຸສາວາທີສູດ ........ ໓໔໓
ວ່າດ້ວຍຜູ້ເວົ້າຕົວະແລະຜູ້ເວັ້ນຂາດຈາກການເວົ້າຕົວະ ........ ໓໔໓
໕. ປິສຸນະວາຈາສູດ ........ ໓໔໓
ວ່າດ້ວຍຜູ້ເວົ້າສັບສໍ່ແລະຜູ້ເວັ້ນຂາດຈາກການເວົ້າສັບສໍ່ ........ ໓໔໓
໖. ຜະຣຸສະວາຈາສູດ ........ ໓໔໔
ວ່າດ້ວຍຜູ້ເວົ້າຄຳຫຍາບແລະຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ........ ໓໔໔
໗. ສຳຜັບປະລາປະສູດ ........ ໓໔໕
ວ່າດ້ວຍຜູ້ເວົ້າບໍ່ມີສາຣະແລະຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ........ ໓໔໕
໘. ອະພິດຊາລຸສູດ ........ ໓໔໖
ວ່າດ້ວຍຜູ້ເພ່ງເລັງຢາກໄດ້ຂອງເຂົາແລະຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ........ ໓໔໖
໙. ພະຍາປັນນະຈິດຕະສູດ ........ ໓໔໗
ວ່າດ້ວຍຜູ້ມີຈິດພະຍາບາດແລະຜູ້ມີຈິດບໍ່ພະຍາບາດ ........ ໓໔໗
໑໐. ມິດສາທິດຖິສູດ ........ ໓໔໘
ວ່າດ້ວຍຜູ້ເປັນມິດສາທິດຖິແລະຜູ້ເປັນສຳມາທິດຖິ ........ ໓໔໘
**໘. ຣາຄະເປີຍຍາລະ** ........ ໓໔໙
໑. ສະຕິປັດຖານສູດ ........ ໓໔໙
ວ່າດ້ວຍການຈະເລີນສະຕິປັດຖານເພື່ອຮູ້ຍິ່ງຣາຄະ ........ ໓໔໙
໒. ສຳມັບປະທານສູດ ........ ໓໔໙
ວ່າດ້ວຍການຈະເລີນສຳມັບປະທານເພື່ອຮູ້ຍິ່ງຣາຄະ ........ ໓໔໙
໓. ອິດທິປາທະສູດ ........ ໓໕໐
ວ່າດ້ວຍການຈະເລີນອິດທິບາດເພື່ອຮູ້ຍິ່ງຣາຄະ ........ ໓໕໐
໔-໑໐. ປະຣິນຍາທິສູດ ........ ໓໕໑
ວ່າດ້ວຍການຈະເລີນທຳເພື່ອກຳນົດຮູ້ຣາຄະເປັນຕົ້ນ ........ ໓໕໑

# ພຣະໄຕຣປິດົກ

## ເຫຼັ້ມທີ ໘໑

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໓

## ອັງຄຸດຕະຣະນິກາຍ ຈະຕຸກກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ປະຖົມປັນນາດ

## ໑. ພັນທະຄາມະວັກ

### ໝວດວ່າດ້ວຍພຸດທະກິດໃນພັນຖະຄາມ

### ໑. ອະນຸພຸດທະສູດ

### ວ່າດ້ວຍການຕັດສະຣູ້ທຳເປັນເຫດສິ້ນພົບ

[໑] ຂ້າພະເຈົ້າໄດ້ສະດັບມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພັນຖະຄາມ ແຄວ້ນວັດຊີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ເພາະບໍ່ຣູ້ແຈ້ງແທງຕະຫຼອດທຳ ໔ ປະການ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວທ່ອງໄປຕະຫຼອດການຍາວນານແບວນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສີນ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວທ່ອງໄປຕະຫຼອດການຍາວນານແນວນີ້
໒. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວທ່ອງໄປຕະຫຼອດການຍາວນານແນວນີ້
໓. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວທ່ອງໄປຕະຫຼອດການຍາວນານແນວນີ້
໔. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວທ່ອງໄປຕະຫຼອດການຍາວນານແນວນີ້

ພິກຂຸທັງຫຼາຍ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສີນ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາຖອນພະວະຕັນຫາ ໄດ້ແລ້ວ ພະວະເນດຕິສິ້ນໄປແລ້ວ ບັດນີ້ພົບໃໝ່ບໍ່ມີອີກ"

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ທຳເຫຼົ່ານີ້ ຄື ສີນ ສະມາທິ ປັນຍາ
ແລະວິມຸດຕິອັນປະເສີດພຣະໂຄດົມຜູ້ມີຍົດຕັດສະຮູ້ແລ້ວ
ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຕັດບອກທຳ
ແກ່ພິກຂຸທັງຫຼາຍເພື່ອຄວາມຮູ້ຍິ່ງ
ພຣະສາດສະດາຊົງເຮັດທີ່ສຸດແຫ່ງທຸກ
ມີຈັກຂຸ ປະຣິນິບພານແລ້ວ

**ອະນຸພຸດທະສູດທີ ໑ ຈົບ**

## ໒. ປະປະຕິຕະສູດ

### ວ່າດ້ວຍບຸກຄົນຜູ້ຕົກຈາກທຳວິໄນ

[໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ປະກອບດ້ວຍທຳ ໔ ປະການ ເຮົາຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້" ທຳ ໔ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ບໍ່ປະກອບດ້ວຍອະຣິຍະສີນ ຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້"
໒. ບຸກຄົນຜູ້ບໍ່ປະກອບດ້ວຍອະຣິຍະສະມາທິ ຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້"

໓. ບຸກຄົນຜູ້ບໍ່ປະກອບດ້ວຍອະຣິຍະປັນຍາ ຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້"
໔. ບຸກຄົນຜູ້ບໍ່ປະກອບດ້ວຍອະຣິຍະວິມຸດຕິ ຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້"

ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ປະກອບດ້ວຍທຳ ໔ ປະການນີ້ແລ ເຮົາຮຽກວ່າ "ຜູ້ຕົກໄປຈາກທຳວິໄນນີ້"

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການ ເຮົາຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້" ທຳ ໔ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ປະກອບດ້ວຍອະຣິຍະສິນ ຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້"
໒. ບຸກຄົນຜູ້ປະກອບດ້ວຍອະຣິຍະສະມາທິ ຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້"
໓. ບຸກຄົນຜູ້ປະກອບດ້ວຍອະຣິຍະປັນຍາ ຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້"
໔. ບຸກຄົນຜູ້ປະກອບດ້ວຍອະຣິຍະວິມຸດຕິ ຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້"

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ເຮົາຮຽກວ່າ "ຜູ້ບໍ່ຕົກໄປຈາກທຳວິໄນນີ້"

ຜູ້ເຄື່ອນຈາກທຳວິໄນນີ້ຍ່ອມຕົກໄປ
ຜູ້ຕົກໄປ ແລະກຳໜັດຍ້ອນຣາຄະຕ້ອງກັບມາອີກ
ເມື່ອເຮັດກິດທີ່ຄວນເຮັດ ຍິນດີສິ່ງທີ່ຄວນຍິນດີ
ຈະບັນລຸສຸກດ້ວຍສຸກ

**ປະປະຕິຕະສູດທີ ໒ ຈົບ**

## ໓. ປະຖະມະຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກກຳຈັດ ສູດທີ ໑

[໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ໄຕ່ຕອງ ກ່າວສັນເສີນຜູ້ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ໄຕ່ຕອງ ກ່າວຕິຕຽນຜູ້ຄວນສັນເສີນ

໓. ບໍ່ພິຈາລະນາ ບໍ່ໄຕ່ຕອງ ສະແດງຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ບໍ່ພິຈາລະນາ ບໍ່ໄຕ່ຕອງ ສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ພິຈາລະນາ ໄຕ່ຕອງແລ້ວ ກ່າວຕິຕຽນຜູ້ຄວນຕິຕຽນ
໒. ພິຈາລະນາ ໄຕ່ຕອງແລ້ວ ກ່າວສັນເສີນຜູ້ຄວນສັນເສີນ
໓. ພິຈາລະນາ ໄຕ່ຕອງແລ້ວ ສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ພິຈາລະນາ ໄຕ່ຕອງແລ້ວ ສະແດງຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ຜູ້ໃດກ່າວສັນເສີນຜູ້ຄວນຕິຕຽນ
ຫຼືກ່າວຕິຕຽນຜູ້ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກເພາະຄວາມຜິດນັ້ນ

ການປຣາໄຊດ້ວຍຊັບໃນການຫຼິ້ນການພະນັນ
ຈົນໝົດຕົວນີ້ ເປັນຄວາມຜິດພຽງເລັກນ້ອຍ
ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍໃນບຸກຄົນ
ທີ່ດຳເນີນໄປດີແລ້ວນີ້ທີ່ນັ້ນ ເປັນຄວາມຜິດຫຼາຍກວ່າ

ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວຕິຕຽນພຣະອະຣິຍະ
ຍ່ອມເຂົ້າເຖິງນະຣົກສິ້ນ ໓໖,໐໐໐ ນິຣັບພຸດທະກັບ
ກັບອີກ ໕ ອັບພຸດທະກັບ

**ປະຖະມະຂະຕະສູດທີ ໓ ຈົບ**

# ໔. ທຸຕິຍະຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກກຳຈັດ ສູດທີ ໒

[໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນມານດາ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ
໒. ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບິດາ ຯລຯ
໓. ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນຕະຖາຄົດ ຯລຯ
໔. ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນສາວົກຂອງຕະຖາຄົດ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນບຸກຄົນ ໔ ຈຳພວກ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະປະສົບບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນມານດາ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ
໒. ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນບິດາ ຯລຯ
໓. ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນຕະຖາຄົດ ຯລຯ

໔. ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນສາວົກຂອງຕະຖາຄົດ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກໍາຈັດ ບໍ່ໃຫ້ຖືກທໍາລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນບຸກຄົນ ໔ ຈໍາພວກນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກໍາຈັດ ບໍ່ໃຫ້ຖືກທໍາລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ນໍຣະຊົນຜູ້ປະຕິບັດຜິດໃນມານດາບິດາ
ຕະຖາຄົດສໍາມາສໍາພຸດທະເຈົ້າ ຫຼື ສາວົກຂອງຕະຖາຄົດນັ້ນ
ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ
ຍ້ອນການບໍ່ປະພຶດທໍາໃນມານດາບິດານັ້ນ
ບັນດິດທັງຫຼາຍຈຶ່ງຕິຕຽນນໍຣະຊົນນັ້ນໃນໂລກນີ້
ເຂົາຈາກໂລກນີ້ໄປແລ້ວຈຶ່ງໄປສູ່ອະບາຍ
ສ່ວນນໍຣະຊົນຜູ້ປະຕິບັດຖືກໃນມານດາບິດາ
ຕະຖາຄົດສໍາມາສໍາພຸດທະເຈົ້າ ຫຼືສາວົກຂອງຕະຖາຄົດນັ້ນ
ຍ່ອມປະສົບບຸນຫຼວງຫຼາຍ
ຍ້ອນການປະພຶດທໍາໃນມານດາບິດານັ້ນ
ບັນດິດທັງຫຼາຍຈຶ່ງສັນເສີນນໍຣະຊົນນັ້ນໃນໂລກນີ້
ເຂົາຈາກໂລກນີ້ໄປແລ້ວຈຶ່ງບັນເທິງໃນສະຫວັນ

**ທຸຕິຍະຂະຕະສູດທີ ໔ ຈົບ**

## ໕. ອະນຸໂສຕະສູດ

## ວ່າດ້ວຍບຸກຄົນຜູ້ໄປຕາມກະແສ

[໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈໍາພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນ ໔ ຈໍາພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ໄປຕາມກະແສ ໒. ບຸກຄົນຜູ້ໄປທວນກະແສ
໓. ບຸກຄົນຜູ້ມີພາວະຕັ້ງໝັ້ນ ໔. ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງດໍາຣົງຢູ່ເທິງບົກ

ບຸກຄົນຜູ້ໄປຕາມກະແສ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເສບກາມແລະເຮັດບາບກຳ ນີ້ຮຽກວ່າບຸກຄົນຜູ້ໄປຕາມກະແສ

ບຸກຄົນຜູ້ໄປທວນກະແສ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ບໍ່ເສບກາມ ແລະບໍ່ເຮັດບາບກຳ ແມ່ນມີທຸກທາງກາຍແລະທຸກທາງໃຈ ຮ້ອງໄຫ້ນ້ຳຕານອງໜ້າ ກໍຍັງປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ ນີ້ຮຽກວ່າບຸກຄົນຜູ້ໄປທວນກະແສ

ບຸກຄົນຜູ້ມີພາວະຕັ້ງໝັ້ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຍ້ອນໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການສິ້ນໄປ ເປັນໂອປະປາຕິກະປະຣິນິບພານໃນພົບນັ້ນ ບໍ່ທວນກັບຈາກໂລກນັ້ນອີກ ນີ້ຮຽກວ່າບຸກຄົນຜູ້ມີພາວະຕັ້ງໝັ້ນ

ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງດຳຣົງຢູ່ເທິງບົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ຮຽກວ່າ ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງດຳຣົງຢູ່ເທິງບົກ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ໃນໂລກນີ້ຊົນຜູ້ບໍ່ສັງລວມໃນກາມທັງຫຼາຍ
ຍັງບໍ່ປາສະຈາກຣາຄະ ບໍຣິໂພກກາມຕາມປົກກະຕິ
ຖືກຕັນຫາຄອບງຳ ເຂົ້າເຖິງຊາດ ແລະຊະຣາສະເໝີ
ຊື່ວ່າຜູ້ໄປຕາມກະແສ
ຍ້ອນເຫດນັ້ນແລ ບຸກຄົນຜູ້ເປັນນັກປາດ
ມີສະຕິຕັ້ງໝັ້ນໃນໂລກນີ້ ບໍ່ເສບກາມແລະບໍ່ເຮັດບາບກຳ
ແມ່ນມີທຸກກໍຍັງລະກາມໄດ້
ບັນດິດທັງຫຼາຍຮຽກບຸກຄົນຜູ້ເປັນນັກປາດນັ້ນວ່າ
ຜູ້ໄປທວນກະແສ
ນໍຣະຊົນຜູ້ລະກິເລດ ໕ ປະການໄດ້
ມີສິກຂາບໍລິບູນ ເປັນຜູ້ບໍ່ເສື່ອມແນ່ນອນ
ເຖິງຄວາມຊ່ຽວຊານໃນຈິດ ມີອິນຊີຕັ້ງໝັ້ນ
ບັນດິດທັງຫຼາຍຮຽກວ່າ ຜູ້ມີພາວະຕັ້ງໝັ້ນ

บุກຄົນຜູ້ປະກອບດ້ວຍຍານກຳຈັດທຳທັງຫຼາຍ
ທັງທີ່ເປັນກຸສົນ ແລະອະກຸສົນໃຫ້ໝົດສິ້ນໄປບໍ່ເຫຼືອຢູ່
ເປັນຜູ້ເຖິງເວດ ຢູ່ຈົບພົມມະຈັນ
ເຖິງບ່ອນສຸດແຫ່ງໂລກ ບັນດິດຮຽກວ່າຜູ້ເຖິງຝັ່ງ[១]

**ອະນຸໂສຕະສູດທີ ๕ ຈົບ**

## ໖. ອັບປັດສຸຕະສູດ

## ວ່າດ້ວຍບຸກຄົນຜູ້ມີສຸຕະໜ້ອຍ

[໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ๔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ๔ ຈຳພວກ[๒] ພວກໃດແດ່ ຄື

໑. ບຸກຄົນຜູ້ມີສຸຕະໜ້ອຍທັງບໍ່ເຂົ້າເຖິງສຸຕະ
໒. ບຸກຄົນຜູ້ມີສຸຕະໜ້ອຍ ແຕ່ເຂົ້າເຖິງສຸຕະ
໓. ບຸກຄົນຜູ້ມີສຸຕະຫຼາຍ ແຕ່ບໍ່ເຂົ້າເຖິງສຸຕະ
໔. ບຸກຄົນຜູ້ມີສຸຕະຫຼາຍທັງເຂົ້າເຖິງສຸຕະ

ບຸກຄົນຜູ້ມີສຸຕະໜ້ອຍທັງບໍ່ເຂົ້າເຖິງສຸຕະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີສຸຕະ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ[១]ໜ້ອຍ ທັງເຂົາກໍບໍ່ຮູ້ອັດຖະຮູ້ທຳແຫ່ງສຸຕະໜ້ອຍນັ້ນແລ້ວ ປະຕິບັດທຳສົມຄວນແກ່ທຳ ບຸກຄົນຜູ້ມີສຸຕະໜ້ອຍທັງບໍ່ເຂົ້າເຖິງສຸຕະ ເປັນແນວນີ້

ບຸກຄົນຜູ້ມີສຸຕະໜ້ອຍ ແຕ່ເຂົ້າເຖິງສຸຕະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີສຸຕະ ຄື ສຸດຕະ ເຄີຍຍະ ฯลฯ ເວທັນລະໜ້ອຍ ແຕ່ເຂົາຮູ້ອັດຖະຮູ້ທຳແຫ່ງສຸຕະໜ້ອຍນັ້ນແລ້ວ ປະຕິບັດທຳສົມຄວນແກ່ທຳ ບຸກຄົນຜູ້ມີສຸຕະໜ້ອຍ ແຕ່ເຂົ້າເຖິງສຸຕະ ເປັນແນວນີ້ແລ

ບຸກຄົນຜູ້ມີສຸຕະຫຼາຍ ແຕ່ບໍ່ເຂົ້າເຖິງສຸຕະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີສຸຕະ ຄື ສຸດຕະ ເຄີຍຍະ ໗ລ໗ ເວທັນລະຫຼາຍ ແຕ່ເຂົາບໍ່ຮູ້ອັດຖະ ຮູ້ທຳແຫ່ງສຸຕະຫຼາຍນັ້ນ ແລ້ວປະຕິບັດທຳສົມຄວນແກ່ທຳ ບຸກຄົນ ຜູ້ມີສຸຕະຫຼາຍແຕ່ບໍ່ເຂົ້າເຖິງສຸຕະ ເປັນແນວນີ້ແລ

ບຸກຄົນຜູ້ມີສຸຕະຫຼາຍທັງເຂົ້າເຖິງສຸຕະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີສຸຕະ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະຫຼາຍ ທັງເຂົາກໍຮູ້ອັດຖະຮູ້ທຳແຫ່ງສຸຕະຫຼາຍນັ້ນແລ້ວ ປະຕິບັດທຳສົມຄວນແກ່ທຳ ບຸກຄົນຜູ້ມີສຸຕະຫຼາຍທັງເຂົ້າເຖິງສຸຕະ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ
ຖ້າບຸກຄົນມີສຸຕະໜ້ອຍ ທັງບໍ່ຕັ້ງໝັ້ນໃນສີນ
ບັນດິດທັງຫຼາຍຍ່ອມຕິຕຽນເຂົາ
ທັງໃນດ້ານສີນແລະສຸຕະ
ຖ້າບຸກຄົນແມ່ນມີສຸຕະໜ້ອຍ ແຕ່ຕັ້ງໝັ້ນດີໃນສີນ
ບັນດິດທັງຫຼາຍຍ່ອມສັນເສີນເຂົາໃນດ້ານສີນ
ແຕ່ສຸຕະຂອງເຂົາບໍ່ສົມບູນ
ຖ້າບຸກຄົນແມ່ນມີສຸຕະຫຼາຍ ແຕ່ບໍ່ຕັ້ງໝັ້ນໃນສີນ
ບັນດິດທັງຫຼາຍຍ່ອມຕິຕຽນເຂົາໃນດ້ານສີນ
ແຕ່ສຸຕະຂອງເຂົາສົມບູນ
ຖ້າບຸກຄົນມີສຸຕະຫຼາຍ ທັງຕັ້ງໝັ້ນດີໃນສີນ
ບັນດິດທັງຫຼາຍຍ່ອມສັນເສີນເຂົາ
ທັງໃນດ້ານສີນແລະສຸຕະ
ໃຜນໍ ຈະສາມາດຕິຕຽນເຂົາຜູ້ມີສຸຕະຫຼາຍ
ຊົງທຳ ມີປັນຍາ ເປັນພຸດທະສາວົກ
ຜູ້ເປັນເໝືອນແທ່ງຄຳຊົມພູນຸດ
ແມ່ນເທວະດາ ແລະມະນຸດກໍສັນເສີນເຂົາ
ເຖິງພົມກໍສັນເສີນເຂົາ

**ອັບປັດສຸຕະສູດທີ ໖ ຈົບ**

# ໗. ໂສພະນະສູດ

## ວ່າດ້ວຍບຸກຄົນຜູ້ເຮັດໝູ່ໃຫ້ງາມ

[໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ ຜູ້ແຫຼມຄົມໄດ້ຮັບຄຳແນະນຳດີ ແກ່ກ້າ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ຍ່ອມເຮັດໝູ່ໃຫ້ງາມ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

ໃນທຳວິໄນນີ້

໑. ພິກຂຸຜູ້ແຫຼມຄົມ ໄດ້ຮັບຄຳແນະນຳດີ ແກ່ກ້າ ເປັນພະຫູສູດ ຊົງທຳປະຕິບັດທຳສົມຄວນແກ່ທຳ ຍ່ອມເຮັດໝູ່ໃຫ້ງາມ

໒. ພິກຂຸນີ ຯລຯ

໓. ອຸປາສົກ ຯລຯ

໔. ອຸປາສິກາຜູ້ແຫຼມຄົມ ໄດ້ຮັບຄຳແນະນຳດີ ແກ່ກ້າ ເປັນພະຫູສູດ ຊົງທຳປະຕິບັດທຳສົມຄວນແກ່ທຳ ຍ່ອມເຮັດໝູ່ໃຫ້ງາມ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລຜູ້ແຫຼມຄົມ ໄດ້ຮັບຄຳແນະນຳດີ ແກ່ກ້າ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ຍ່ອມເຮັດໝູ່ໃຫ້ງາມ

ບຸກຄົນຜູ້ແຫຼມຄົມ ແກ່ກ້າ ເປັນພະຫູສູດ
ຊົງທຳ ແລະປະຕິບັດທຳສົມຄວນແກ່ທຳ
ຮຽກວ່າຜູ້ເຮັດໝູ່ໃຫ້ງາມ
ພິກຂຸຜູ້ສົມບູນດ້ວຍສິນ ພິກຂຸນີຜູ້ເປັນພະຫູສູດ
ອຸປາສົກຜູ້ມີສັດທາ ແລະອຸປາສິກາຜູ້ມີສັດທາ
ຊົນເຫຼົ່ານີ້ ຍ່ອມເຮັດໝູ່ໃຫ້ງາມ
ຊົນເຫຼົ່ານີ້ ຊື່ວ່າສັງຄະໂສພະນະ

**ໂສພະນະສູດທີ ໗ ຈົບ**

# ໘. ເວສາຣັດຊະສູດ

## ວ່າດ້ວຍຍານເປັນເຫດໃຫ້ແກ່ກ້າ

[໘] ພິກຂຸທັງຫຼາຍ ເວສາຣັດຊະຍານ (ຍານເປັນເຫດໃຫ້ແກ່ກ້າ) ໔ ປະການນີ້ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານ (ຢືນຢັນ) ຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ເວສາຣັດຊະຍານຂອງຕະຖາຄົດ ໔ ປະການ ອັນໃດແດ່ ຄື

໑. ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ "ທ່ານປະຕິຍານວ່າເປັນພຣະສຳມາສຳພຸດທະ ທຳເຫຼົ່ານີ້ທ່ານກໍຍັງບໍ່ຮູ້" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

໒. ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ "ທ່ານປະຕິຍານວ່າເປັນພຣະຂີນາສົບ ອາສະວະເຫຼົ່ານີ້ຂອງທ່ານກໍຍັງບໍ່ໝົດສິ້ນໄປ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

໓. ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ "ອັນຕະຣາຍິກະທຳທີ່ທ່ານກ່າວໄວ້ບໍ່ອາດຈະກໍ່ອັນຕະລາຍແກ່ຜູ້ເສບໄດ້ຈິງ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

໔. ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ "ທ່ານສະແດງທຳເພື່ອປະໂຫຍດແນວໃດ ປະໂຫຍດແນວນັ້ນບໍ່ສຳເລັດ ເພື່ອຄວາມສິ້ນສຸດທຸກໂດຍຖືກຕ້ອງແກ່ຜູ້ເຮັດຕາມໄດ້ຈິງ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

ພິກຂຸທັງຫຼາຍ ເວສາຣັດຊະຍານ ໔ ປະການນີ້ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ວາທະເຫຼົ່າໃດທີ່ສະມະນະຫຼືພາມ
ກະກຽມໄວ້ແຜ່ຫຼາຍ
ວາທະເຫຼົ່ານັ້ນມາເຖິງຕະຖາຄົດຜູ້ແກ່ກ້າ
ຜູ້ລ່ວງວາທະໄດ້ຍ່ອມບໍ່ມີຜົນ
ສັດທັງຫຼາຍຍ່ອມນະມັດສະການຕະຖາຄົດ
ຜູ້ພຽບພ້ອມດ້ວຍໂລກຸດຕະຣະທຳທັງໝົດ
ຜູ້ປະກາດທຳມະຈັກຄອບຄຸມທັງໝົດ
ຜູ້ອະນຸເຄາະສັດທຸກຈຳພວກ

ຜູ້ປະເສີດກວ່າເທວະດາແລະມະນຸດ
ຜູ້ເຖິງຝັ່ງແຫ່ງພົບເຊັ່ນນັ້ນ

**ເວສາຣັດຊະສູດທີ ໗ ຈົບ**

## ໙. ຕັນຫຸບປາທະສູດ

## ວ່າດ້ວຍເຫດເກີດແຫ່ງຕັນຫາ

[໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ມີເຫດເກີດແຫ່ງຕັນຫາ ໔ ປະການນີ້ທີ່ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຂຶ້ນໄດ້

ມີເຫດເກີດແຫ່ງຕັນຫາ ໔ ປະການ ອັນໃດແດ່ ຄື

໑. ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຍ້ອນຈີວອນເປັນເຫດ
໒. ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຍ້ອນບິນທະບາດເປັນເຫດ
໓. ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຍ້ອນເສນາສະນະເປັນເຫດ
໔. ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຍ້ອນປັດໄຈທີ່ດີແລະດີກວ່າ

ພິກຂຸທັງຫຼາຍ ມີເຫດເກີດແຫ່ງຕັນຫາ ໔ ປະການນີ້ ທີ່ຕັນຫາເມື່ອຈະເກີດແກ່ພິກຂຸ ຍ່ອມເກີດຂຶ້ນໄດ້

ບຸກຄົນມີຕັນຫາເປັນເພື່ອນ
ທ່ຽວໄປຕະຫຼອດການຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດ
ທີ່ມີສະພາວະແບບນີ້ແລະສະພາວະແບບອື່ນ
ພິກຂຸຮູ້ໂທດນີ້ ຮູ້ຕັນຫາເປັນເຫດໃຫ້ເກີດທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ
ມີສະຕິສຳປະຊັນຍະຢູ່

**ຕັນຫຸບປາທະສູດທີ ໙ ຈົບ**

# ໑໐. ໂຍຄະສູດ

## ວ່າດ້ວຍໂຍຄະ

[໑໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໂຍຄະ (ກິເລດທີ່ຜູກມັດສັດໄວ້ໃນພົບ) ໔ ປະການນີ້

ໂຍຄະ ໔ ປະການ ອັນໃດແດ່ ຄື

໑. ກາມໂຍຄະ
໒. ພະວະໂຍຄະ
໓. ທິດຖິໂຍຄະ
໔. ອະວິດຊາໂຍຄະ

ກາມໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຍ່ອມບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດກາມທັງຫຼາຍອອກໄປຕາມຄວາມເປັນຈິງ ເມື່ອເຂົາບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດກາມທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກຳໜັດຍ້ອນກາມ ຄວາມເພີດເພີນຍ້ອນກາມ ຄວາມມີເຍື່ອໃຍຍ້ອນກາມ ຄວາມມົກມຸ້ນຍ້ອນກາມ ຄວາມກະຫາຍຍ້ອນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມຕິດຍ້ອນກາມ ຄວາມຢາກຍ້ອນກາມ ຍ່ອມເກີດຂຶ້ນໃນກາມທັງຫຼາຍ໓ ນີ້ຮຽກວ່າ ກາມໂຍຄະ

ກາມໂຍຄະ ເປັນແນວນີ້

ພະວະໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຍ່ອມບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດພົບທັງຫຼາຍອອກໄປຕາມຄວາມເປັນຈິງ ເມື່ອເຂົາບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດພົບທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກຳໜັດຍ້ອນພົບ ຄວາມເພີດເພີນຍ້ອນພົບ ຄວາມເຍື່ອໃຍຍ້ອນພົບ ຄວາມມົກມຸ້ນຍ້ອນພົບ ຄວາມກະຫາຍຍ້ອນພົບ ຄວາມຮ້ອນຮົນຍ້ອນພົບ ຄວາມຕິດຍ້ອນພົບ ຄວາມຢາກຍ້ອນພົບ ຍ່ອມເກີດຂຶ້ນໃນພົບທັງຫຼາຍ ນີ້ຮຽກວ່າ ພະວະໂຍຄະ

ກາມໂຍຄະແລະພະວະໂຍຄະ ເປັນແນວນີ້

ທິດຖິໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຍ່ອມບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດທິດຖິທັງຫຼາຍອອກໄປຕາມຄວາມເປັນຈິງ ເມື່ອເຂົາບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດທິດຖິທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກຳໜັດຍ້ອນທິດຖິ ຄວາມເພີດເພີນຍ້ອນທິດຖິ ຄວາມເຍື່ອໃຍຍ້ອນທິດຖິ ຄວາມມົກມຸ້ນຍ້ອນທິດຖິ ຄວາມກະຫາຍຍ້ອນທິດຖິ ຄວາມຮ້ອນຮົນຍ້ອນທິດຖິ ຄວາມຕິດຍ້ອນທິດຖິ ຄວາມຢາກຍ້ອນທິດຖິ ຍ່ອມເກີດຂຶ້ນໃນທິດຖິທັງຫຼາຍ ນີ້ຮຽກວ່າ ທິດຖິໂຍຄະ

ກາມໂຍຄະ ພະວະໂຍຄະ ແລະທິດຖິໂຍຄະ ເປັນແນວນີ້

ອະວິດຊາໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຍ່ອມບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດຜັດສາຍະຕະນະ ໖ ປະການອອກໄປຕາມຄວາມເປັນຈິງ ເມື່ອເຂົາບໍ່ຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດຜັດສາຍະຕະນະ ໖ ປະການອອກໄປຕາມຄວາມເປັນຈິງ ຄວາມບໍ່ຮູ້ ຄວາມບໍ່ຢັ່ງຮູ້ ຍ່ອມເກີດຂຶ້ນໃນຜັດສາຍະຕະນະ ໖ ປະການ ນີ້ຮຽກວ່າ ອະວິດຊາໂຍຄະ

ກາມໂຍຄະ ພະວະໂຍຄະ ທິດຖິໂຍຄະ ແລະອະວິດຊາໂຍຄະ ເປັນແນວນີ້

ບຸກຄົນຜູ້ປະກອບດ້ວຍບາບອະກຸສົນທຳທີ່ເຮັດຈິດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ ມີ ຄວາມກະວົນກະວາຍ ມີທຸກເປັນຜົນ ມີຊາດ ຊະຣາ ແລະມໍລະນະຕໍ່ໄປອີກ ເພາະເຫດນັ້ນຈຶ່ງຮຽກວ່າ ຜູ້ບໍ່ມີຄວາມກະເສມ (ປອດ) ຈາກໂຍຄະ

ພິກຂຸທັງຫຼາຍ ໂຍຄະ ໔ ປະການນີ້ແລ

ພິກຂຸທັງຫຼາຍ ຄວາມພາກຈາກໂຍຄະ ໔ ປະການນີ້
ຄວາມພາກຈາກໂຍຄະ ໔ ປະການ ອັນໃດແດ່ ຄື

໑. ຄວາມພາກຈາກກາມໂຍຄະ
໒. ຄວາມພາກຈາກພະວະໂຍຄະ
໓. ຄວາມພາກຈາກທິດຖິໂຍຄະ
໔. ຄວາມພາກຈາກອະວິດຊາໂຍຄະ

ຄວາມພາກຈາກກາມໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຍ່ອມຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດກາມທັງຫຼາຍ ອອກໄປຕາມຄວາມເປັນຈິງ ເມື່ອເຂົາຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດກາມທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກຳໜັດຍ້ອນ

ກາມ ຄວາມເພີດເພີນຍ້ອນກາມ ຄວາມເບື່ອໃຍຍ້ອນກາມ ຄວາມມົກມຸ້ນຍ້ອນກາມ ຄວາມກະຫາຍຍ້ອນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມຕິດຍ້ອນກາມ ຄວາມຢາກຍ້ອນກາມ ຍ່ອມບໍ່ເກີດຂຶ້ນໃນກາມທັງຫຼາຍ ນີ້ຮຽກວ່າ ຄວາມພາກຈາກກາມໂຍຄະ

ຄວາມພາກຈາກກາມໂຍຄະ ເປັນແນວນີ້

ຄື ບຸກຄົນລາງຄົນໃນໂລກນີ້ຍ່ອມຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດພົບທັງຫຼາຍອອກໄປຕາມຄວາມເປັນຈິງ ເມື່ອເຂົາຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດພົບທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກໍາໜັດຍ້ອນພົບ ຄວາມເພີດເພີນຍ້ອນພົບ ຄວາມເບື່ອໃຍຍ້ອນພົບ ຄວາມມົກມຸ້ນຍ້ອນພົບ ຄວາມກະຫາຍຍ້ອນພົບ ຄວາມຮ້ອນຮົນຍ້ອນພົບ ຄວາມຕິດຍ້ອນພົບ ຄວາມຢາກຍ້ອນພົບຍ່ອມບໍ່ເກີດຂຶ້ນໃນພົບທັງຫຼາຍ ນີ້ຮຽກວ່າ ຄວາມພາກຈາກພະວະໂຍຄະ

ຄວາມພາກຈາກກາມໂຍຄະ ແລະຄວາມພາກຈາກພະວະໂຍຄະ ເປັນແນວນີ້

ຄວາມພາກຈາກທິດຖິໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຍ່ອມຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດທິດຖິທັງຫຼາຍອອກໄປຕາມຄວາມເປັນຈິງ ເມື່ອເຂົາຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດທິດຖິທັງຫຼາຍອອກໄປຕາມຄວາມເປັນຈິງ ຄວາມກໍາໜັດຍ້ອນທິດຖິ ຄວາມເພີດເພີນຍ້ອນທິດຖິ ຄວາມເບື່ອໃຍຍ້ອນທິດຖິ ຄວາມມົກມຸ້ນຍ້ອນທິດຖິ ຄວາມກະຫາຍຍ້ອນທິດຖິ ຄວາມຮ້ອນຮົນຍ້ອນທິດຖິ ຄວາມຕິດຍ້ອນທິດຖິ ຄວາມຢາກຍ້ອນທິດຖິຍ່ອມບໍ່ເກີດຂຶ້ນໃນທິດຖິທັງຫຼາຍ ນີ້ຮຽກວ່າ ຄວາມພາກຈາກທິດຖິໂຍຄະ ຄວາມພາກຈາກກາມໂຍຄະ ຄວາມພາກຈາກພະວະໂຍຄະ ແລະຄວາມພາກຈາກທິດຖິໂຍຄະ ເປັນແນວນີ້

ຄວາມພາກຈາກອະວິດຊາໂຍຄະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຍ່ອມຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດຜັດສາຍະຕະນະ ໖ ປະການອອກໄປຕາມຄວາມເປັນຈິງ ເມື່ອເຂົາຮູ້ແຈ້ງເຊິ່ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະລັດຜັດສາຍະຕະນະ ໖ ປະການອອກໄປຕາມຄວາມເປັນຈິງຄວາມບໍ່ຮູ້ ຄວາມບໍ່ຢັ່ງຮູ້ ຍ່ອມບໍ່ເກີດຂຶ້ນໃນຜັດສາຍະຕະນະ ໖ ປະການ ນີ້ຮຽກວ່າ ຄວາມພາກຈາກອະວິດຊາໂຍຄະ ຄວາມພາກຈາກກາມໂຍຄະ ຄວາມພາກຈາກພະວະໂຍຄະ ຄວາມພາກຈາກທິດຖິໂຍຄະ ແລະຄວາມພາກຈາກອະວິດຊາໂຍຄະ ເປັນແນວນີ້

ບຸກຄົນຜູ້ພາກຈາກບາບອະກຸສົນທຳທີ່ເຮັດຈິດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນຜົນ ມີຊາດ ຊະຣາ ແລະມໍລະນະຕໍ່ໄປອີກ ເພາະເຫດນັ້ນ ຈຶ່ງຮຽກວ່າ ຜູ້ມີຄວາມກະເສມຈາກໂຍຄະ

ພິກຂຸທັງຫຼາຍ ຄວາມພາກຈາກໂຍຄະ ໔ ປະການນີ້ແລ

ສັດທັງຫຼາຍຜູ້ປະກອບດ້ວຍກາມໂຍຄະ
ພະວະໂຍຄະ ທິດຖິໂຍຄະ ແລະອະວິດຊາໂຍຄະ
ເຖິງຊາດແລະມໍລະນະຢູ່ເປັນປະຈຳ ຍ່ອມໄປສູ່ສັງສາຣະວັດ
ສ່ວນສັດເຫຼົ່າໃດ ກຳນົດຮູ້ກາມໂຍຄະ
ແລະພະວະໂຍຄະໂດຍປະການທັງປວງ
ຖອນທິດຖິໂຍຄະແລະຄາຍອະວິດຊາອອກໄດ້
ສັດເຫຼົ່ານັ້ນ ຍ່ອມພົ້ນຈາກໂຍຄະທັງປວງ
ລ່ວງພົ້ນໂຍຄະ ເປັນມຸນີ

**ໂຍຄະສູດທີ ໑໐ ຈົບ**

**ພັນທະຄາມະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະນຸພຸດທະສູດ
໒. ປະຖະມະຂະຕະສູດ
໓. ອະນຸໂສຕະສູດ
໗. ໂສພະນະສູດ
໙. ຕັນຫຸບປາທະສູດ
໔. ປະປະຕິຕະສູດ
໔. ທຸຕິຍະຂະຕະສູດ
໖. ອັບປັດສຸຕະສູດ
໘. ເວສາຣັດຊະສູດ
໑໐. ໂຍຄະສູດ

# ໔. ຈະຣະວັກ

## ໝວດວ່າດ້ວຍອິລິຍາບົດຍ່າງ

### ໑. ຈະຣະສູດ

### ວ່າດ້ວຍອິລິຍາບົດຍ່າງ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າກາມວິຕົກ (ຄວາມນຶກໃນທາງກາມ) ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ) ຫຼື ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ເກີດຂຶ້ນແກ່ພິກຂຸຜູ້ກຳລັງຍ່າງ ແລະພິກຂຸຍິນດີວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຍ່າງ ຜູ້ເປັນແນວນີ້ ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາຮຽກວ່າ "ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ"

ຖ້າກາມວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຢືນ ແລະພິກຂຸຍິນດີວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຢືນ ຜູ້ເປັນແນວນີ້ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາກໍຮຽກວ່າ "ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ"

ຖ້າກາມວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນັ່ງ ແລະພິກຂຸຍິນດີວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນັ່ງ ຜູ້ເປັນແນວນີ້ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາກໍຮຽກວ່າ "ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ"

ຖ້າກາມວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນອນ ຕື່ນຢູ່ ແລະພິກຂຸຍິນດີວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແນວນີ້ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາກໍຮຽກວ່າ "ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ"

ຖ້າກາມວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຍ່າງ ແລະພິກຂຸບໍ່ຍິນດີວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນ ກຳລັງຍ່າງ ຜູ້ເປັນແນວນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ "ຜູ້ພາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ"

ຖ້າການວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຢືນ ແລະພິກຂຸບໍ່ຍິນດີວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນ ກຳລັງຢືນ ຜູ້ເປັນແນວນີ້ມີຄວາມພຽນ ມີໂອດຕັບປະ ເຮົາກໍ່ຮຽກວ່າ "ຜູ້ຜາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ"

ຖ້າການວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນັ່ງ ແລະພິກຂຸບໍ່ຍິນດີວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນັ່ງ ຜູ້ເປັນແນວນີ້ມີຄວາມພຽນ ມີໂອດຕັບປະ ເຮົາກໍ່ຮຽກວ່າ "ຜູ້ຜາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ"

ພິກຂຸທັງຫຼາຍ ຖ້າການວິຕົກ ພະຍາບາດວິຕົກ ຫຼື ວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນອນ ຕື່ນຢູ່ ແລະພິກຂຸບໍ່ຍິນດີວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດ ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແນວນີ້ມີຄວາມພຽນ ມີໂອດຕັບປະ ເຮົາກໍ່ຮຽກວ່າ "ຜູ້ຜາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ"

ຖ້າພິກຂຸໃດຜູ້ກຳລັງຍ່າງ ຢືນ
ນັ່ງ ຫຼື ນອນນຶກເຖິງອະກຸສົນວິຕົກ
ທີ່ກ່ຽວເນື່ອງກັບການຄອງເຮືອນ
ພິກຂຸນັ້ນຊື່ວ່າເດີນທາງຜິດ
ມົວໝຸ້ນຢູ່ໃນອາລົມເປັນເຫດແຫ່ງຄວາມຫຼົງ
ພິກຂຸເຊັ່ນນີ້ບໍ່ສາມາດບັນລຸສຳໂພທິຍານອັນສູງສຸດໄດ້
ພິກຂຸໃດຜູ້ກຳລັງຍ່າງ ຢືນ
ນັ່ງ ຫຼື ນອນໃຫ້ວິຕົກສະງົບ
ຍິນດີໃນທຳເປັນທີ່ຣະງັບວິຕົກ
ພິກຂຸເຊັ່ນນັ້ນສາມາດບັນລຸສຳໂພທິຍານອັນສູງສຸດໄດ້

**ຈະຣະສູດທີ ໑ ຈົບ**

# ໘. ສີລະສູດ

### ວ່າດ້ວຍບຸກຄົນຜູ້ມີສີນ

[໑໘] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີສີນສົມບູນ ມີປາຕິໂມກສົມບູນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດ

ແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍເທີ້ນ ເມື່ອທ່ານທັງຫຼາຍ ມີສີນສົມບູນ ມີປາຕິໂມກສົມບູນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະ ໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ຈະມີກິດອັນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປກວ່ານີ້ອີກນໍ

ຖ້າພິກຂຸຜູ້ກຳລັງຍ່າງຢູ່ ປາສະຈາກອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ) ພະຍາບາດ (ຄວາມຄິດຮ້າຍ) ລະຖີນະມິດທະ (ຄວາມທໍ້ຖອຍແລະເຊື່ອງຊຶມ) ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ວິຈິກິດສາ (ຄວາມລັງເລສົງໄສ) ໄດ້ ຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ ເປັນສະມາທິ ພິກຂຸແມ່ນກຳລັງຍ່າງຢູ່ ຜູ້ເປັນແນວນີ້ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ "ຜູ້ຜາຣົບຄວາມພຽນອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ"

ຖ້າພິກຂຸຜູ້ກຳລັງຢືນ ຯລຯ

ຖ້າພິກຂຸຜູ້ກຳລັງນັ່ງ ຯລຯ

ຖ້າພິກຂຸຜູ້ກຳລັງນອນ ຕື່ນຢູ່ ປາສະຈາກອະພິດຊາ ພະຍາບາດ ລະຖີນະມິດທະ ອຸດທັດຈະກຸກກຸດຈະ ວິຈິກິດສາໄດ້ ຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ ເປັນສະມາທິ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແນວນີ້ມີຄວາມພຽນ ມີໂອດຕັບປະ ເຮົາກໍຮຽກວ່າ "ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ"

ພິກຂຸຄວນຍ່າງສັງລວມ ຢືນສັງລວມ
ນັ່ງສັງລວມ ນອນສັງລວມ
ຄູ້ເຂົ້າສັງລວມ ຢຽດອອກສັງລວມ
ພິຈາລະນາຄວາມເກີດແລະຄວາມດັບແຫ່ງທຳຂັນ
ທົ່ວພູມເປັນບ່ອນຢູ່ຂອງສັດທັງຊັ້ນເທິງ ຊັ້ນກາງ ແລະຊັ້ນຕ່ຳ
ນັກປາດທັງຫຼາຍຮຽກພິກຂຸເຊັ່ນນັ້ນ
ຜູ້ສຶກສາຂໍ້ປະຕິບັດທີ່ສົມຄວນແກ່ຄວາມສະງົບໃຈ
ມີສະຕິຢູ່ທຸກເມື່ອວ່າ "ຜູ້ອຸທິດກາຍແລະໃຈຢູ່ຕໍ່ເນື່ອງ"

**ສີລະສູດທີ ໘ ຈົບ**

# ໓. ປະທານະສູດ

## ວ່າດ້ວຍສຳມັບປະທານ

[໑໓] ພິກຂຸທັງຫຼາຍ ສຳມັບປະທານ (ຄວາມພຽນຖືກ) ໔ ປະການນີ້

ສຳມັບປະທານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸ ສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ
໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂື້ນແລ້ວ
໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳຣົງຢູ່ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ສຳມັບປະທານ ໔ ປະການນີ້ແລ

ພຣະຂີນາສົບເຫຼົ່ານັ້ນມີສຳມັບປະທານ
ຄອບງຳບ້ວງມານໄດ້ ອັນກິເລດບໍ່ອາໄສ
ເຖິງຝັ່ງແຫ່ງຊາດແລະມໍລະນະ
ທ່ານເຫຼົ່ານັ້ນຊະນະມານພ້ອມທັງເສນາມານ
ເປັນຜູ້ຍິນດີ ບໍ່ມີຄວາມຫວັ່ນໄຫວ
ແລະລ່ວງພົ້ນເຊິ່ງກອງພົນມານທັງໝົດ ເຖິງສຸກແລ້ວ

**ປະທານະສູດທີ ໓ ຈົບ**

# ໔. ສັງວອນສູດ

## ວ່າດ້ວຍສັງວອນປະທານ

[໑໔] ພິກຂຸທັງຫຼາຍ ປະທານ (ຄວາມພຽນ) ໔ ປະການນີ້

ປະທານ ໔ ປະການອັນໃດແດ່ ຄື

໑. ສັງວອນປະທານ (ພຽນຣະວັງ)
໒. ປະຫານະປະທານ (ພຽນລະ)
໓. ພາວະນາປະທານ (ພຽນຈະເລີນ)
໔. ອະນຸຣັກຂະນາປະທານ (ພຽນຖືຮັກສາ)

ສັງວອນປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດ ເພື່ອຄວາມສັງລວມຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ) ແລະໂທມະນັດ (ຄວາມທຸກໃຈ) ຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງ ໂຜດທັບພະທາງກາຍ ฯລฯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ນີ້ຮຽກວ່າ ສັງວອນປະທານ

ປະຫານະປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຍິນດີກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີພະຍາບາດວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີວິຫິງສາວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ນີ້ຮຽກວ່າ ປະຫານະປະທານ

ພາວະນາປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນ ສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມຣະນຶກໄດ້) ທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ຈະ

ເລີນທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມເຟັ້ນທຳ) ໗ລ໗ ຈະເລີນ ວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມພຽນ) ໗ລ໗ ຈະເລີນປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມອີ່ມໃຈ) ໗ລ໗ ຈະເລີນປັດສັດທິສຳໂພດຊົງ (ທຳເປັນອົງ ແຫ່ງການຕັດສະຮູ້ຄືຄວາມສະງົບກາຍສະງົບໃຈ) ໗ລ໗ ຈະເລີນສະມາທິສຳໂພດຊົງ (ທຳເປັນ ອົງແຫ່ງການຕັດສະຮູ້ຄືຄວາມຕັ້ງຈິດໝັ້ນ) ໗ລ໗ ຈະເລີນອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງ ການຕັດສະຮູ້ຄືຄວາມວາງໃຈເປັນກາງ) ທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ ນີ້ຮຽກວ່າ ພາວະນາປະທານ

ອະນຸຣັກຂະນາປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຕາມຖືຮັກສາສະມາທິນິມິດທີ່ແຈ້ງດີເຊິ່ງເກີດຂຶ້ນແລ້ວ ຄື ອັດຖິກະ ສັນຍາ (ກຳນົດໝາຍຊາກສົບທີ່ຍັງເຫຼືອຢູ່ແຕ່ຮ່າງກະດູກຫຼືກະດູກທ່ອນ) ປຸລຸວະກະສັນຍາ (ກຳນົດໝາຍຊາກສົບທີ່ມີໜອນໄຕ່ຢູ່ເຕັມໄປຫມົດ) ວິນີລະກະສັນຍາ (ກຳນົດໝາຍຊາກສົບທີ່ມີສີ ຂຽວຂຶ້ນດ້ວຍສີຕ່າງ ໆ) ວິປຸບພະກະສັນຍາ (ກຳນົດໝາຍຊາກສົບທີ່ມີນໍ້າເຫຼືອງໄຫຼຍ້ອຍຢູ່ຕາມ ຮອຍທີ່ແຕກແຍກອອກ) ວິດສິດທະກະສັນຍາ (ກຳນົດໝາຍຊາກສົບທີ່ຂາດຈາກກັນເປັນ ໔ ທ່ອນ) ອຸດທຸມາຕະກະສັນຍາ (ກຳນົດໝາຍຊາກສົບທີ່ເນົ່າພອງຂຶ້ນອືດ) ນີ້ຮຽກວ່າ ອະນຸຣັກຂະ ນາປະທານ

ພິກຂຸທັງຫຼາຍ ປະທານ ໔ ປະການນີ້ແລ
ປະທານ ໔ ປະການນີ້ ຄື

ສັງວອນປະທານ ປະທານະປະທານ
ພາວະນາປະທານ ແລະອະນຸຣັກຂະນາປະທານ
ພຣະພຸດທະເຈົ້າຜູ້ເປັນເຜົ່າພັນພຣະອາທິດຊົງສະແດງໄວ້ແລ້ວ
ທີ່ເປັນເຫດໃຫ້ພິກຂຸໃນທຳວິໄນນີ້
ຜູ້ມີຄວາມພຽນ ເຖິງຄວາມສິ້ນທຸກ

**ສັງວອນສູດທີ ໔ ຈົບ**

## ໕. ປັນຍັດຕິສູດ

### ວ່າດ້ວຍການບັນຍັດສິ່ງທີ່ເລີດ

[໑໕] ພິກຂຸທັງຫຼາຍ ບັນຍັດສິ່ງທີ່ເລີດ ໔ ປະການນີ້

ບັນຍັດສິ່ງທີ່ເລີດ ໔ ປະການ ອັນໃດແດ່ ຄື

໑. ບັນດາສັດຜູ້ມີອັດຕະພາບໃຫຍ່ ຣາຫູຜູ້ເປັນຈອມອະສູນເປັນເລີດ
໒. ບັນດາກາມໂພຄີບຸກຄົນ ພຣະເຈົ້າມັນທາດເປັນເລີດ
໓. ບັນດາບຸກຄົນຜູ້ຍິ່ງໃຫຍ່ ມານຜູ້ມີບາບເປັນເລີດ
໔. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຊາວໂລກກ່າວວ່າເປັນເລີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ

ພິກຂຸທັງຫຼາຍ ບັນຍັດສິ່ງທີ່ເລີດ ໔ ປະການນີ້ແລ

ບັນດາສັດຜູ້ມີອັດຕະພາບໃຫຍ່
ຣາຫູຜູ້ເປັນຈອມອະສູນເປັນເລີດ
ບັນດາກາມໂພຄີບຸກຄົນ ພຣະເຈົ້າມັນທາດເປັນເລີດ
ບັນດາບຸກຄົນຜູ້ຍິ່ງໃຫຍ່ ມານເປັນເລີດ
ພຣະພຸດທະເຈົ້າຜູ້ຮຸ່ງເຮືອງດ້ວຍລິດດ້ວຍຍົດ
ຊາວໂລກກ່າວວ່າເປັນເລີດໃນໂລກພ້ອມທັງເທວະໂລກ
ທີ່ວພູມເປັນບ່ອນຢູ່ຂອງສັດທັງຊັ້ນເທິງ ຊັ້ນກາງ ແລະຊັ້ນຕ່ຳ

**ປັນຍັດຕິສູດທີ ໕ ຈົບ**

# ໖. ໂສຂຸມມະສູດ

## ວ່າດ້ວຍໂສຂຸມມະຍານ

[໑໖] ພິກຂຸທັງຫຼາຍ ໂສຂຸມມະຍານ (ຍານເປັນເຄື່ອງກຳນົດຮູ້ລັກສະນະລະອຽດ) ໔ ປະການນີ້ ໂສຂຸມມະຍານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍຮູບໂສຂຸມມະຍານ ບໍ່ເຫັນຮູບໂສຂຸມມະຍານອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າຮູບໂສຂຸມມະຍານນັ້ນ ແລະບໍ່ປາຖະໜາຮູບໂສຂຸມມະຍານຢ່າງອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າຮູບໂສຂຸມມະຍານນັ້ນ

໓. ເປັນຜູ້ປະກອບດ້ວຍເວທະນາໂສຊຸມມະຍານ ບໍ່ເຫັນຍານອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າເວທະນາໂສຊຸມມະຍານນັ້ນ ແລະບໍ່ປາຖະໜາເວທະນາໂສຊຸມມະຍານຢ່າງອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າເວທະນາໂສຊຸມມະຍານນັ້ນ

໓. ເປັນຜູ້ປະກອບດ້ວຍສັນຍາໂສຊຸມມະຍານ ບໍ່ເຫັນຍານອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າສັນຍາໂສຊຸມມະຍານນັ້ນ ແລະບໍ່ປາຖະໜາສັນຍາໂສຊຸມມະຍານຢ່າງອື່ນທີ່ຍິ່ງກວ່າ ຫຼື ປະນີດກວ່າສັນຍາໂສຊຸມມະຍານນັ້ນ

໔. ເປັນຜູ້ປະກອບດ້ວຍສັງຂານໂສຊຸມມະຍານ ບໍ່ເຫັນສັງຂານໂສຊຸມມະຍານອື່ນທີ່ຍິ່ງກວ່າຫຼືປະນີດກວ່າສັງຂານໂສຊຸມມະຍານນັ້ນ ແລະບໍ່ປາຖະໜາສັງຂານໂສຊຸມມະຍານຢ່າງອື່ນທີ່ຍິ່ງກວ່າຫຼືປະນີດກວ່າສັງຂານໂສຊຸມມະຍານນັ້ນ

ພິກຂຸທັງຫຼາຍ ໂສຊຸມມະຍານ ໔ ປະການນີ້ແລ

ພິກຂຸໃດຮູ້ຄວາມລະອຽດແຫ່ງຮູບຂັນ
ຮູ້ແດນເກີດແຫ່ງເວທະນາຂັນ
ຮູ້ເຫດເກີດແລະບ່ອນດັບແຫ່ງສັນຍາຂັນ
ຮູ້ສັງຂານຂັນໂດຍຄວາມເປັນຂອງບໍ່ທ່ຽງ
ເປັນທຸກ ແລະເປັນອະນັດຕາ
ພິກຂຸນັ້ນແລ ເຫັນຖືກສະງົບ
ຍິນດີໃນສັນຕິບົດ ຊະນະມານພ້ອມທັງເສນາມານ
ດຳລົງຮ່າງກາຍຊາດສຸດທ້າຍໄວ້

**ໂສຊຸມມະສູດທີ ໗ ຈົບ**

## ກ. ປະຖະມະອະຄະຕິສູດ

### ວ່າດ້ວຍອະຄະຕິ ສູດທີ ໑

[໑ກ] ພິກຂຸທັງຫຼາຍ ການເຖິງອະຄະຕິ (ຄວາມລຳອຽງ) ໔ ປະການນີ້

ການເຖິງອະຄະຕິ ໔ ປະການ ອັນໃດແດ່ ຄື
ບຸກຄົນຍ່ອມເຖິງ

໑. ສັນທາຄະຕິ (ລຳອຽງເພາະມັກ) ໒. ໂທສາຄະຕິ (ລຳອຽງເພາະຊັງ)

໓. ໂມຫາຄະຕິ (ລຳອຽງເພາະຫຼົງ)　　໔. ພະຍາຄະຕິ (ລຳອຽງເພາະຢ້ານ)

ພິກຂຸທັງຫຼາຍ ການເຖິງອະຄະຕິ ໔ ປະການນີ້ແລ

ບຸກຄົນໃດລະເມີດຄວາມຊອບທຳ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ຍົດຂອງບຸກຄົນນັ້ນຍ່ອມເສື່ອມ
ຄືດວງຈັນຂ້າງແຮມສັນນັ້ນ

**ປະຖະມະອະຄະຕິສູດທີ ໗ ຈົບ**

## ໘. ທຸຕິຍະອະຄະຕິສູດ
## ວ່າດ້ວຍອະຄະຕິ ສູດທີ ໒

[໑໘] ພິກຂຸທັງຫຼາຍ ການບໍ່ເຖິງອະຄະຕິ ໔ ປະການນີ້

ການບໍ່ເຖິງອະຄະຕິ ໔ ປະການ ອັນໃດແດ່ ຄື
ບຸກຄົນຍ່ອມບໍ່ເຖິງ

໑. ສັນທາຄະຕິ　　໒. ໂທສາຄະຕິ
໓. ໂມຫາຄະຕິ　　໔. ພະຍາຄະຕິ

ພິກຂຸທັງຫຼາຍ ການບໍ່ເຖິງອະຄະຕິ ໔ ປະການນີ້ແລ

ບຸກຄົນໃດບໍ່ລະເມີດຄວາມຊອບທຳ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ຍົດຂອງບຸກຄົນນັ້ນຍ່ອມບໍລິບູນ
ຄືດວງຈັນຂ້າງຂຶ້ນສັນນັ້ນ

**ທຸຕິຍະອະຄະຕິສູດທີ ໘ ຈົບ**

## ໙. ຕະຕິຍະອະຄະຕິສູດ
## ວ່າດ້ວຍອະຄະຕິ ສູດທີ ໓

[໑໙] ພິກຂຸທັງຫຼາຍ ການເຖິງອະຄະຕິ ໔ ປະການນີ້

ການເຖິງອະຄະຕິ ໔ ປະການ ອັນໃດແດ່ ຄື
ບຸກຄົນຍ່ອມເຖິງ

໑. ສັນທາຄະຕິ ໒. ໂທສາຄະຕິ
໓. ໂມຫາຄະຕິ ໔. ພະຍາຄະຕິ

ພິກຂຸທັງຫຼາຍ ການເຖິງອະຄະຕິ ໔ ປະການນີ້ແລ
ພິກຂຸທັງຫຼາຍ ການບໍ່ເຖິງອະຄະຕິ ໔ ປະການນີ້
ການບໍ່ເຖິງອະຄະຕິ ໔ ປະການ ອັນໃດແດ່ ຄື
ບຸກຄົນຍ່ອມບໍ່ເຖິງ

໑. ສັນທາຄະຕິ ໒. ໂທສາຄະຕິ
໓. ໂມຫາຄະຕິ ໔. ພະຍາຄະຕິ

ພິກຂຸທັງຫຼາຍ ການບໍ່ເຖິງອະຄະຕິ ໔ ປະການນີ້ແລ

ບຸກຄົນໃດລະເມີດຄວາມຊອບທຳ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ຍົດຂອງບຸກຄົນນັ້ນຍ່ອມເສື່ອມ
ຄືດວງຈັນຂ້າງແຮມສັນນັ້ນ
ສ່ວນບຸກຄົນໃດບໍ່ລະເມີດຄວາມຊອບທຳ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ຍົດຂອງບຸກຄົນນັ້ນຍ່ອມບໍລິບູນ
ຄືດວງຈັນຂ້າງຂຶ້ນສັນນັ້ນ

**ຕະຕິຍະອະຄະຕິສູດທີ ໙ ຈົບ**

## ໑໐. ພັດຕຸດເທສະກະສູດ

## ວ່າດ້ວຍພຣະພັດຕຸດເທສະກະຊົ່ວແລະດີ

[໔໐] ພິກຂຸທັງຫຼາຍ ພຣະພັດຕຸດເທສະກະ ຜູ້ປະກອບດ້ວຍທຳ ໔ ປະການ ຍ່ອມດຳຣົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

ພຣະພັດຕຸດເທສະກະຍ່ອມເຖິງ

໑. ສັນທາຄະຕິ ໒. ໂທສາຄະຕິ
໓. ໂມຫາຄະຕິ ໔. ພະຍາຄະຕິ

ພິກຂຸທັງຫຼາຍ ພຣະພັດຕຸດເທສະກະຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳຣົງຢູ່ໃນນະຮົກເໝືອນຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພຣະພັດຕຸດເທສະກະຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື
ພຣະພັດຕຸດເທສະກະຍ່ອມບໍ່ເຖິງ

໑. ສັນທາຄະຕິ ໒. ໂທສາຄະຕິ
໓. ໂມຫາຄະຕິ ໔. ພະຍາຄະຕິ

ພິກຂຸທັງຫຼາຍ ພຣະພັດຕຸດເທສະກະຜູ້ປະກອບດ້ວຍທຳ ໔ ປະການນີ້ ຍ່ອມດຳຣົງຢູ່ໃນສະຫວັນເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ຊົນເຫຼົ່າໃດເຫຼົ່າໜຶ່ງຜູ້ບໍ່ສັງລວມໃນກາມທັງຫຼາຍ
ບໍ່ປະກອບດ້ວຍທຳ ບໍ່ເຄົາລົບທຳ ເຖິງອະຄະຕິ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ບຸກຄົນເຊັ່ນນີ້ ເຮົາຮຽກວ່າຜູ້ເປັນຂີ້ເຫຍື່ອໃນບໍລິສັດ
ສະມະນະຜູ້ຮູ້ກ່າວໄວ້ແລ້ວແນວນີ້
ເພາະເຫດນັ້ນ ບຸກຄົນຜູ້ດຳຣົງຢູ່ໃນທຳ
ບໍ່ເຮັດບາບ ບໍ່ເຖິງອະຄະຕິ
ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ
ເປັນສັດຕະບຸຣຸດທີ່ໜ້າສັນເສີນ
ບຸກຄົນເຊັ່ນນີ້ ເຮົາຮຽກວ່າຜູ້ຜຸດຜ່ອງໃນບໍລິສັດ
ສະມະນະຜູ້ຮູ້ກ່າວໄວ້ແລ້ວແນວນີ້ແລ

**ພັດຕຸດເທສະກະສູດທີ ໑໐ ຈົບ**

**ຈະຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ຈະຣະສູດ
໒. ປະທານະສູດ
໕. ປັນຍັດຕິສູດ
໗. ປະຖະມະອະຄະຕິສູດ
໙. ຕະຕິຍະອະຄະຕິສູດ
໓. ສີລະສູດ
໔. ສັງວໍຣະສູດ
໖. ໂສຂຸມມະສູດ
໘. ທຸຕິຍະອະຄະຕິສູດ
໑໐. ພັດຕຸດເທສະກະສູດ


# ໒. ອຸຣຸເວລະວັກ

## ໝວດວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ

## ໑. ປະຖະມະອຸຣຸເວລະສູດ

### ວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ ສູດທີ ໑

[໔໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ໃນສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍ ມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ເມື່ອທຳອິດຕັດສະຣູ້ ເຮົາຢູ່ທີ່ຕົ້ນອະຊະປາລະນິໂຄດ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ເຮົານັ້ນຫຼີບຫຼີກຢູ່ໃນບ່ອນສະຫງັດ ໄດ້ເກີດຄວາມຮ່ຳເພິງຂຶ້ນມາຢ່າງນີ້ວ່າ "ບຸກຄົນຜູ້ບໍ່ເຄົາລົບ ບໍ່ຢຳແຢງຍ່ອມຢູ່ເປັນທຸກ ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະ ຫຼື ພາມຄົນໃດນໍ ຢູ່" ດັ່ງນີ້

ເຮົານັ້ນໄດ້ມີຄວາມດຳຣິວ່າ "ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະ ຫຼື ພາມອື່ນຢູ່ເພື່ອຄວາມບໍລິບູນແຫ່ງສີນຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະ ຫຼື ພາມອື່ນໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງ ສະມະນະພາມ ເທວະດາ ແລະມະນຸດທີ່ມີສີນສົມບູນກວ່າເຮົາ ທີ່ເຮົາຈະເພິ່ງສັກກາຣະ ເຄົາລົບ ອາໄສຢູ່

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະ ຫຼື ພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງສະມາທິຂັນທີ່ຍັງບໍ່ບໍລິບູນ ຯລຯ

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະ ຫຼື ພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງປັນຍາຂັນທີ່ຍັງບໍ່ບໍລິບູນ ຯລຯ

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະ ຫຼື ພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງວິມຸດຕິຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະ ຫຼື ພາມອື່ນໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທີ່ມີວິມຸດຕິສົມບູນກວ່າເຮົາ ທີ່ເຮົາຈະເພິ່ງສັກກາຣະ ເຄົາລົບ ອາໄສຢູ່"

ເຮົານັ້ນ ໄດ້ມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນຈະສັກກາຣະ ເຄົາລົບ ອາໄສທຳທີ່ເຮົາຕັດສະຣູ້ແລ້ວນັ້ນຢູ່"

ຄັ້ງນັ້ນ ທ້າວສະຫຳບໍດີພົມກຳນົດຮູ້ຄວາມຮ່ຳເພິງດ້ວຍໃຈ ຫາຍໂຕຈາກພົມມະໂລກມາຜາກົດຕໍ່ໜ້າເຮົາປຽບຄືບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າແນວນັ້ນ ເມື່ອແລ້ວທ່ານຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຄຸກເຂົ່າດ້ານຂວາລົງເທິງແຜ່ນດິນ ປະນົມມືມາທາງເຮົາ ໄດ້ກ່າວກັບເຮົາດັ່ງນີ້ວ່າ "ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນີ້ ຂ້າແດ່ພຣະສຸຄົດ ເລື້ອງນີ້ເປັນແນວນີ້ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າໃນອະດີດ ຊົງສັກກາຣະ ເຄົາລົບ ອາໄສທຳຢູ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າໃນອະນາຄົດ ກໍຈັກສັກກາຣະ ເຄົາລົບ ອາໄສທຳຢູ່ ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ໃນປັດຈຸບັນກໍຂໍຈົ່ງສັກກາຣະ ເຄົາລົບ ອາໄສທຳຢູ່ເທີ້ນ"

ທ້າວສະຫຳບໍດີພົມໄດ້ກ່າວຄາຖາປະພັນຕໍ່ໄປອີກວ່າ

"ພຣະສຳມາສຳພຸດທະເຈົ້າໃນອະດີດ
ພຣະສຳມາສຳພຸດທະເຈົ້າໃນອະນາຄົດ
ແລະພຣະສຳມາສຳພຸດທະເຈົ້າໃນປັດຈຸບັນ
ຜູ້ກຳຈັດຄວາມໂສກຂອງສັດຫຼວງຫຼາຍໃຫ້ພິນາດໄປ
ທຸກພຣະອົງລ້ວນເຄົາລົບພຣະສັດທຳຢູ່
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ
ເພາະເຫດນັ້ນ ກຸນລະບຸດຜູ້ໃຝ່ປະໂຫຍດ
ມຸ້ງຫວັງຄວາມເປັນໃຫຍ່
ຣະນຶກເຖິງຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ
ເພິ່ງເຄົາລົບພຣະສັດທຳ"

ພິກຂຸທັງຫຼາຍ ທ້າວສະຫໍາບໍດີພົມເມື່ອກ່າວຄາຖາປະພັນນີ້ແລ້ວຈຶ່ງໄຫວ້ເຮົາ ທໍາປະທັກ ຂິນແລ້ວຫາຍໄປໃນບ່ອນນັ້ນເອງ ພິກຂຸທັງຫຼາຍ ການທີ່ເຮົາຮູ້ການເຊື້ອເຊີນຂອງພົມ ແລະສັກ ກາຣະ ເຄົາລົບ ອາໄສທໍາທີ່ເຮົາຕັດສະຮູ້ແລ້ວນັ້ນແລຢູ່ ເປັນການສົມຄວນແກ່ເຮົາ ແຕ່ເມື່ອໃດ ສົງປະກອບດ້ວຍຄວາມເປັນໃຫຍ່ ເມື່ອນັ້ນເຮົາກໍມີຄວາມເຄົາລົບໃນສົງ"

**ປະຖະມະອຸຣຸເວລະສູດທີ ໑ ຈົບ**

## ໔. ທຸຕິຍະອຸຣຸເວລະສູດ

## ວ່າດ້ວຍພຸດທະກິດໃນເຂດອຸຣຸເວລາ ສູດທີ ໔

[໔໔] "ພິກຂຸທັງຫຼາຍ ເມື່ອທໍາອິດຕັດສະຮູ້ ເຮົາອາໄສຢູ່ທີ່ຕົ້ນອະຊະປາລະນິໂຄດ ໃກ້ຝັ່ງ ແມ່ນໍ້າເນຣັນຊະຣາ ເຂດອຸຣຸເວລາ ຄັ້ງນັ້ນແລ ພາມຈໍານວນຫຼາຍເປັນຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ ລ່ວງ ການຜ່ານໄວ ເຂົ້າມາຫາເຮົາເຖິງບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນ ທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ "ທ່ານພຣະໂຄດົມ ພວກຂ້າ ພະເຈົ້າໄດ້ຮູ້ມາວ່າ ພຣະສະມະນະໂຄດົມບໍ່ອະພິວາດ ບໍ່ລຸກຮັບພວກພາມຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ຫຼື ບໍ່ເຊື້ອເຊີນໃຫ້ນັ່ງ ທ່ານພຣະໂຄດົມ ເລື້ອງທີ່ພວກຂ້າພະເຈົ້າໄດ້ຮູ້ມານັ້ນ ຈິງຢ່າງແນ່ນອນ ຍ້ອນວ່າທ່ານພຣະໂຄດົມບໍ່ອະພິວາດ ບໍ່ລຸກຮັບພວກ ພາມຜູ້ແກ່ ຜູ້ເຖົ້າ ຜູ້ ໃຫຍ່ ຜູ້ລ່ວງການຜ່ານໄວ ຫຼື ບໍ່ເຊື້ອເຊີນໃຫ້ນັ່ງ ການທີ່ທ່ານ ພຣະໂຄດົມເຮັດເຊັ່ນນັ້ນບໍ່ ສົມຄວນເລີຍ"

ເຮົານັ້ນ ໄດ້ມີຄວາມດໍາຣິວ່າ "ທ່ານເຫຼົ່ານີ້ ບໍ່ຮູ້ຈັກເຖຣະ ຫຼື ທໍາທີ່ເຮັດໃຫ້ເປັນເຖຣະ" ເຖິງແມ່ນນັບແຕ່ເກີດມາ ບຸກຄົນຈະເປັນຄົນແກ່ມີອາຍຸ ໘໐ ປີ ໙໐ ປີ ຫຼື ໑໐໐ ປີ ແຕ່ເຂົາ ເວົ້າ ບໍ່ຖືກເວລາ ເວົ້າຄໍາບໍ່ຈິງ ເວົ້າບໍ່ອິງປະໂຫຍດ ເວົ້າບໍ່ອິງທໍາ ເວົ້າບໍ່ອິງວິໄນ ເວົ້າຄໍາບໍ່ມີຫຼັກຖານ ບໍ່ມີບ່ອນອ້າງອີງ ບໍ່ມີບ່ອນກໍານົດ ບໍ່ປະກອບດ້ວຍປະໂຫຍດ ບໍ່ເໝາະແກ່ເວລາ ເຂົາຍ່ອມເຖິງ ການນັບວ່າ "ເປັນເຖຣະຜູ້ໂງ່ຈ້າ" ໂດຍແທ້

ເຖິງແມ່ນວ່າຈະເປັນເດັກ ຍັງເປັນໜຸ່ມລຸ້ນເຍົາ ມີຜົມດໍາສະນິດ ປະກອບດ້ວຍຄວາມໜຸ່ມ ແໜ້ນຢູ່ໃນປະຖົມໄວ ແຕ່ເຂົາເວົ້າຖືກເວລາ ເວົ້າຄໍາຈິງ ເວົ້າອິງປະໂຫຍດ ເວົ້າອິງທໍາ ເວົ້າອິງ ວິໄນ ເວົ້າຄໍາມີຫຼັກຖານ ມີບ່ອນອ້າງອີງ ມີບ່ອນກໍານົດ ປະກອບດ້ວຍປະໂຫຍດ ເໝາະແກ່ ເວລາ ເຂົາຍ່ອມເຖິງການນັບວ່າ "ເປັນເຖຣະຜູ້ສະຫຼາດ" ໂດຍແທ້

ພິກຂຸທັງຫຼາຍ ທໍາທີ່ເຮັດໃຫ້ເປັນເຖຣະ ໔ ປະການນີ້

ທຳທີ່ເຮັດໃຫ້ເປັນເຖຣະ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງມາຫຼາຍ ເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໔. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ທຳທີ່ເຮັດໃຫ້ເປັນເຖຣະ ໔ ປະການເປັນແນວນີ້ແລ"

ບຸກຄົນຜູ້ມີຈິດຟຸ້ງຊ່ານ
ມີຄວາມດຳຣິບໍ່ໝັ້ນຄົງເໝືອນມະຣິຄະ (ກວາງ)
ຍິນດີໃນອະສັດທຳ ກ່າວຄຳຂາດສາຣະຫຼວງຫຼາຍ
ມີຄວາມເຫັນຕ່ຳຊາມ ບໍ່ມີຄວາມເອື້ອເຟື້ອ
ຍ່ອມຫ່າງໄກຈາກຄວາມເປັນຜູ້ໝັ້ນຄົງ
ສ່ວນບຸກຄົນຜູ້ສົມບູນດ້ວຍສີນ
ມີສຸຕະ ມີປະຕິພານ ປະກອບຢູ່ໃນທຳທີ່ໝັ້ນຄົງ
ຍ່ອມເຫັນແຈ້ງອັດຖະແຫ່ງອະຣິຍະສັດດ້ວຍມັກຄະປັນຍາ
ເຖິງຝັ່ງແຫ່ງທຳທັງປວງ ບໍ່ມີກິເລດເກາະຢຶດໄວ້
ມີປະຕິພານ ລະຄວາມເກີດແລະຄວາມຕາຍໄດ້ແລ້ວ
ພຽບພ້ອມດ້ວຍພົມມະຈັນ
ເຮົາຮຽກພິກຂຸຜູ້ບໍ່ມີອາສະວະວ່າ "ເຖຣະ"
ເຮົາຮຽກພິກຂຸນັ້ນວ່າ "ເຖຣະ" ເພາະສິ້ນອາສະວະທັງຫຼາຍ

**ທຸຕິຍະອຸຣຸເວລະສູດທີ ໒ ຈົບ**

# ໖. ໂລກະສູດ

## ວ່າດ້ວຍໂລກ

[໘໖] ພິກຂຸທັງຫຼາຍ ໂລກຕະຖາຄົດຕັດສະຮູ້ແລ້ວ ຕະຖາຄົດພາກຈາກໂລກ ຕະຖາຄົດຕັດສະຮູ້ເຫດເກີດແຫ່ງໂລກ ຕະຖາຄົດລະເຫດເກີດແຫ່ງໂລກແລ້ວ ຕະຖາຄົດຕັດສະຮູ້ຄວາມດັບແຫ່ງໂລກ ຕະຖາຄົດເຮັດໃຫ້ປະຈັກເຊິ່ງຄວາມດັບແຫ່ງໂລກ ຕະຖາຄົດຕັດສະຮູ້ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງໂລກ ຕະຖາຄົດພ່ຳເພັງຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງໂລກແລ້ວ

ເພາະຕະຖາຄົດຕັດສະຮູ້ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມ ທີ່ຮູ້ແຈ້ງທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດເຖິງ ສະແຫວງຫາ ຕອງຕາມດ້ວຍໃຈທັງໝົດ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ເພາະຕະຖາຄົດຕັດສະຮູ້ໃນຣາຕີໃດ ປະຣິນິບພານໃນຣາຕີໃດ ໃນລະຫວ່າງນີ້ຍ່ອມພາສິດກ່າວ ສະແດງອອກເຊິ່ງຄຳໃດ ຄຳນັ້ນ ທັງໝົດເປັນຈິງແນວນັ້ນ ບໍ່ເປັນແນວອື່ນ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ເພາະຕະຖາຄົດກ່າວຢ່າງໃດ ກໍເຮັດແນວນັ້ນ ເຮັດແນວໃດ ກໍກ່າວແນວນັ້ນ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ເພາະຕະຖາຄົດເປັນຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຖ່ອງແທ້ ແຜ່ອຳນາດໄປໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"[໑]

ບຸກຄົນໃດຮູ້ແຈ້ງໂລກທັງປວງ
ຕາມຄວາມເປັນຈິງທັງໝົດ
ພາກຈາກໂລກທັງປວງ
ບໍ່ມີກິເລດສັ່ງສົມຢູ່ໃນໂລກທັງປວງ
ບຸກຄົນນັ້ນຄອບງຳອາລົມໄດ້ທັງໝົດ
ເປັນນັກປາດ ປົດເປື້ອງກິເລດທີ່ຮ້ອຍຮັດໄດ້ທັງໝົດ
ບັນລຸນິບພານທີ່ມີຄວາມສະງົບຢ່າງຍິ່ງ
ບໍ່ມີໄພແຕ່ບ່ອນໃດ
ບຸກຄົນນີ້ໝົດສິ້ນອາສະວະ ເປັນພຸດທະ

ບໍ່ມີທຸກ ຕັດຄວາມສົງໄສໄດ້
ບັນລຸຄວາມໝົດສິ້ນກຳທັງປວງ
ຫຼຸດພົ້ນຍ້ອນໝົດສິ້ນອຸປະທິກິເລດ
ບຸກຄົນນັ້ນເປັນຜູ້ມີໂຊກ ຕັດສະຣູ້
ປຽບຄືຣາດຊະສີທີ່ປະເສີດ
ປະກາດພົມມະຈັກແກ່ໂລກພ້ອມທັງເທວະໂລກ
ຍ້ອນເຫດນັ້ນ ເທວະດາແລະມະນຸດທັງຫຼາຍ
ທີ່ເຖິງພຣະພຸດທະເຈົ້າວ່າເປັນສະຣະນະ ມາປະຊຸມກັນ
ນະມັດສະການພຣະອົງຜູ້ຍິ່ງໃຫຍ່ ຊົງແກ່ກ້າ
ເທວະດາແລະມະນຸດທັງຫຼາຍນະມັດສະການພຣະພຸດທະເຈົ້ານັ້ນ
ຜູ້ຍິ່ງໃຫຍ່ ຊົງແກ່ກ້າດ້ວຍການສັນເສີນວ່າ
ເປັນຜູ້ເຝິກຕົນທີ່ປະເສີດສຸດໃນໝູ່ຜູ້ເຝິກຕົນທັງຫຼາຍ
ເປັນລືສີຜູ້ສະງົບກວ່າຜູ້ສະງົບທັງຫຼາຍ
ເປັນຜູ້ຫຼຸດພົ້ນທີ່ປະເສີດກວ່າຜູ້ຫຼຸດພົ້ນທັງຫຼາຍ
ເປັນຜູ້ຂ້າມພົ້ນທີ່ປະເສີດກວ່າຜູ້ຂ້າມພົ້ນທັງຫຼາຍ
ໃນໂລກພ້ອມທັງເທວະໂລກ
ບໍ່ມີບຸກຄົນທີ່ປຽບທຽບກັບພຣະອົງໄດ້

**ໂລກະສູດທີ ໓ ຈົບ**

## ໔. ກາລະກາຣາມະສູດ

## ວ່າດ້ວຍພຸດທະກິດໃນກາລະກາຣາມ

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກາລະກາຣາມ ເຂດເມືອງສາເກດ ໃນບ່ອນ ນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດເຖິງ ສະແຫວງຫາ ຕອງຕາມດ້ວຍໃຈນັ້ນ ເຮົາກໍຮູ້

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດເຖິງສະແຫວງຫາ ຕອງຕາມດ້ວຍໃຈນັ້ນ ເຮົາກໍຮູ້ແລ້ວ ຕະຖາຄົດຮູ້ແຈ້ງຮູບທີ່ໄດ້ເຫັນເປັນຕົ້ນນັ້ນອາລົມນັ້ນ ບໍ່ຜາກົດໃນຕະຖາຄົດ

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດເຖິງສະແຫວງຫາ ຕອງຕາມດ້ວຍໃຈນັ້ນເຮົາກ່າວວ່າ "ບໍ່ຮູ້" ຄຳນັ້ນ ຂອງເຮົາເພິ່ງເປັນຄຳຕົວະ

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ฯລฯ ນັ້ນເຮົາເພິ່ງກ່າວວ່າ "ທັງຮູ້ແລະບໍ່ຮູ້" ແມ່ນຄຳນັ້ນເພິ່ງເປັນຄຳຕົວະເຊັ່ນດຽວກັນ

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ฯລฯ ນັ້ນເຮົາເພິ່ງກ່າວວ່າ "ຮູ້ກໍບໍ່ແມ່ນ ບໍ່ຮູ້ກໍບໍ່ແມ່ນ" ຄຳນັ້ນເພິ່ງເປັນໂທດແກ່ເຮົາ

ຕະຖາຄົດເຫັນຮູບທີ່ຄວນເຫັນແລ້ວ ແຕ່ບໍ່ສຳຄັນວ່າໄດ້ເຫັນ ບໍ່ສຳຄັນວ່າບໍ່ໄດ້ເຫັນ ບໍ່ສຳຄັນວ່າຕ້ອງໄດ້ເຫັນ ບໍ່ສຳຄັນວ່າເປັນຜູ້ເຫັນ ຟັງສຽງທີ່ຄວນຟັງແລ້ວ ແຕ່ບໍ່ສຳຄັນວ່າໄດ້ຟັງ ບໍ່ສຳຄັນວ່າບໍ່ໄດ້ຟັງ ບໍ່ສຳຄັນວ່າຕ້ອງໄດ້ຟັງ ບໍ່ສຳຄັນວ່າເປັນຜູ້ຟັງ ຮູ້ອາລົມ ທີ່ຄວນຮູ້ແລ້ວ ແຕ່ບໍ່ສຳຄັນວ່າໄດ້ຮູ້ ບໍ່ສຳຄັນວ່າບໍ່ໄດ້ຮູ້ ບໍ່ສຳຄັນວ່າຕ້ອງໄດ້ຮູ້ ບໍ່ສຳຄັນວ່າເປັນຜູ້ຮູ້ ຮູ້ແຈ້ງທຳມາຣົມທີ່ຄວນຮູ້ແຈ້ງແລ້ວ ແຕ່ບໍ່ສຳຄັນວ່າ ໄດ້ຮູ້ແຈ້ງ ບໍ່ສຳຄັນວ່າບໍ່ໄດ້ຮູ້ແຈ້ງ ບໍ່ສຳຄັນວ່າຕ້ອງໄດ້ຮູ້ແຈ້ງ ບໍ່ສຳຄັນວ່າເປັນຜູ້ຮູ້ແຈ້ງ

ພິກຂຸທັງຫຼາຍ ຕະຖາຄົດເປັນຜູ້ຄົງທີ່ເຊັ່ນນັ້ນ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ເຮົາກ່າວວ່າ "ບຸກຄົນອື່ນ ຜູ້ຄົງທີ່ຍິ່ງກວ່າ ຫຼື ປະນີດກວ່າຕະຖາຄົດຜູ້ຄົງທີ່ນັ້ນ ບໍ່ມີ"

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້
ທີ່ຄົນເຫຼົ່າອື່ນມົກມຸ້ນແລ້ວ ສຳຄັນກັນວ່າຈິງ
ຕະຖາຄົດເປັນຜູ້ຄົງທີ່ໃນຮູບເປັນຕົ້ນເຫຼົ່ານັ້ນ
ທີ່ສັງລວມຣະວັງດີແລ້ວດ້ວຍພຣະອົງເອງ
ບໍ່ປັກໃຈເຊື່ອວ່າຈິງຫຼືເທັດ
ເຮົາເຫັນລູກສອນຄືທິດຖິນີ້ກ່ອນແລ້ວ
ຈຶ່ງຮູ້ເຫັນລູກສອນຄືທິດຖິນັ້ນ
ທີ່ໝູ່ສັດມົກມຸ້ນແລ້ວ ຂ້ອງຢູ່ແນວນັ້ນ
ແຕ່ຕະຖາຄົດທັງຫຼາຍບໍ່ມີຄວາມມົກມຸ້ນ

**ກາລະກາຣາມະສູດທີ ๔ ຈົບ**

# ໕. ພົມຈະຣິຍະສູດ

## ວ່າດ້ວຍການປະພຶດພົມມະຈັນ

[໔໕] ພິກຂຸທັງຫຼາຍ ຕະຖາຄົດປະພຶດພົມມະຈັນນີ້ ບໍ່ແມ່ນເພື່ອຈະລວງຄົນ ບໍ່ແມ່ນເພື່ອກ່ຽວກ່ອມຄົນ ບໍ່ແມ່ນເພື່ອອານິສົງ ຄື ລາບສັກກາຣະແລະຊື່ສຽງ ບໍ່ແມ່ນເພື່ອອານິສົງ ຄື ການອວດອ້າງວາທະ ບໍ່ແມ່ນເພື່ອໃຫ້ຄົນຮູ້ວ່າ "ຄົນຈົ່ງຮູ້ຈັກເຮົາດ້ວຍອາການແນວນີ້" ແທ້ຈິງແລ້ວ ຕະຖາຄົດປະພຶດພົມມະຈັນນີ້ເພື່ອສັງລວມຣະວັງ ເພື່ອລະ ເພື່ອຄາຍກຳໜັດ ເພື່ອດັບທຸກ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ໄດ້ຊົງສະແດງພົມມະຈັນ
ປາສະຈາກຄວາມຍຶດໝັ້ນຖືໝັ້ນແຕ່ບູຮານ
ເຮັດໃຫ້ສັດເຖິງພຣະນິບພານເພື່ອສັງລວມຣະວັງເພື່ອລະ
ຫົນທາງນີ້ທ່ານຜູ້ໃຫຍ່
ຜູ້ສະແຫວງຫາຄຸນຍິ່ງໃຫຍ່ດຳເນີນໄປຕາມແລ້ວ
ອັນໜຶ່ງ ເຫຼົ່າຊົນຜູ້ປະຕິບັດຕາມແນວທາງ
ທີ່ພຣະພຸດທະເຈົ້າຊົງສະແດງແລ້ວ
ຊື່ວ່າເຮັດຕາມຄຳສັ່ງສອນຂອງພຣະສາດສະດາ
ຈັກເຮັດບ່ອນສຸດແຫ່ງທຸກໄດ້

**ພົມຈະຣິຍະສູດທີ ໕ ຈົບ**

# ໖. ກຸຫະສູດ

## ວ່າດ້ວຍພິກຂຸຜູ້ຫຼອກລວງ

[໔໖] ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດຫຼອກລວງ ແຂງກະດ້າງ ປະຈົບ ມັກວາງທ່າ ອວດດີ ມີຈິດບໍ່ຕັ້ງໝັ້ນ ພິກຂຸເຫຼົ່ານັ້ນຊື່ວ່າ ບໍ່ແມ່ນຜູ້ນັບຖືເຮົາ ຫ່າງໄກຈາກທຳວິໄນນີ້ ແລະຍ່ອມບໍ່ເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ ສ່ວນພິກຂຸເຫຼົ່າໃດ ບໍ່ຫຼອກລວງ ບໍ່ປະຈົບ ເປັນນັກປາດບໍ່ແຂງກະດ້າງ ມີຈິດຕັ້ງໝັ້ນ ພິກຂຸເຫຼົ່ານັ້ນ ຊື່ວ່າ ຜູ້ນັບຖືເຮົາ ບໍ່ຫ່າງໄກຈາກທຳວິໄນນີ້ ແລະເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

ພວກພິກຂຸຜູ້ຫຼອກລວງ ແຂງກະດ້າງ
ປະຈົບ ມັກວາງທ່າ ອວດດີ

ແລະມີຈິດບໍ່ຕັ້ງໝັ້ນ ຍ່ອມບໍ່ງອກງາມໃນທຳ
ທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້ແລ້ວ
ສ່ວນພິກຂຸທີ່ບໍ່ຫຼອກລວງ ບໍ່ປະຈົບ
ເປັນນັກປາດ ບໍ່ແຂງກະດ້າງ
ແລະມີຈິດຕັ້ງໝັ້ນດີ ຍ່ອມງອກງາມໃນທຳ
ທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້ແລ້ວ

**ກຸຫະສູດທີ ໖ ຈົບ**

# ໗. ສັນຕຸດຖິສູດ

## ວ່າດ້ວຍຄວາມສັນໂດດດ້ວຍປັດໄຈ ໔

[໔໗] ພິກຂຸທັງຫຼາຍ ປັດໄຈ ໔ ຢ່າງນີ້ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

ປັດໄຈ ໔ ຢ່າງ ອັນໃດແດ່ ຄື

໑. ບັນດາຈີວອນ ບັງສຸກຸນຈີວອນ (ຜ້າທີ່ໄດ້ມາຈາກກອງຝຸ່ນ) ມີຄ່າໜ້ອຍຫາໄດ້ງ່າຍ ແລະບໍ່ມີໂທດ
໒. ບັນດາໂພຊະນະ ປິນດິຍາໂລປະໂພຊະນະ (ໂພຊະນະຄືຄຳເຂົ້າທີ່ໄດ້ມາດ້ວຍກຳລັງແຂ່ງ) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ
໓. ບັນດາເສນາສະນະ ຣຸກຂະມູນເສນາສະນະ (ຢູ່ອາໄສເຫງົ້າໄມ້) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ
໔. ບັນດາຢາປົວພະຍາດ ປູຕິມຸດຕະເພສັດ (ຢາດອງນ້ຳມູນເນົ່າ) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

ປັດໄຈ ໔ ຢ່າງນີ້ ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

ພິກຂຸທັງຫຼາຍ ຍ້ອນພິກຂຸເປັນຜູ້ສັນໂດດດ້ວຍປັດໄຈທີ່ມີຄ່າໜ້ອຍ ແລະຫາໄດ້ງ່າຍ ນີ້ ເຮົາຈຶ່ງກ່າວວ່າ “ເປັນອົງປະກອບແຫ່ງຄວາມເປັນສະມະນະຢ່າງໜຶ່ງ” ຂອງພິກຂຸນັ້ນ

ຈິດຂອງພິກຂຸຜູ້ສັນໂດດດ້ວຍປັດໄຈ
ທີ່ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ
ຍ່ອມບໍ່ມີຄວາມຄັບແຄ້ນ ບໍ່ຕິດຂັດທົ່ວທິດ
ຍ້ອນຜາຣົບຈີວອນ ໂພຊະນະ ເສນາສະນະ ແລະຢາປົວພະຍາດ

ແລະທຳທີ່ເໝາະແກ່ຄວາມເປັນສະມະນະ
ທີ່ພິກຂຸນັ້ນ ກ່າວໄວ້ແລ້ວ
ອັນພິກຂຸຜູ້ສັນໂດດ ບໍ່ຜະໝາດ ບັນລຸແລ້ວ

**ສັນຕຸດຖິສູດທີ ໗ ຈົບ**

## ໘. ອະຣິຍະວັງສະສູດ

## ວ່າດ້ວຍອະຣິຍະວົງ

[໔໘] ພິກຂຸທັງຫຼາຍ ອະຣິຍະວົງ ໔ ປະການນີ້ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ບໍ່ຖືກລຶບລ້າງ ຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ອະຣິຍະວົງ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ ກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ ບໍ່ສະແຫວງຫາອັນບໍ່ສົມຄວນຍ້ອນຈີວອນເປັນເຫດ ບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈ ບໍ່ມົກມຸ້ນ ບໍ່ລຸ່ມຫຼົງ ເບິ່ງເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍຢູ່ ແລະບໍ່ຍົກຕົນ ຂົ່ມຜູ້ອື່ນ ຍ້ອນຄວາມສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ນັ້ນ ພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີສຳປະ ຊັນຍະ ມີສະຕິໝັ້ນຄົງໃນຄວາມສັນໂດດດ້ວຍຈີວອນ ຕາມແຕ່ຈະໄດ້ ພິກຂຸນີ້ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງ ທີ່ຮູ້ກັນວ່າລ້ຳເລີດເປັນຂອງເກົ່າ

໒. ສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ ກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ ບໍ່ສະແຫວງຫາອັນບໍ່ສົມຄວນຍ້ອນບິນທະບາດເປັນເຫດ ບໍ່ໄດ້ບິນທະບາດກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈ ບໍ່ມົກມຸ້ນ ບໍ່ລຸ່ມຫຼົງ ເບິ່ງເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ສັນຢູ່ ແລະບໍ່ຍົກຕົນຂົ່ມຜູ້ອື່ນ ຍ້ອນຄວາມສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ນັ້ນ ພິກຂຸໃດ ຂະຫຍັນ ບໍ່ຂີ້ຄ້ານ ມີສຳປະຊັນຍະ ມີສະຕິໝັ້ນຄົງ ໃນຄວາມສັນ

ໂດດດ້ວຍບິນທະບາດຕາມແຕ່ ຈະໄດ້ ພິກຂຸນີ້ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າລໍ້າເລີດ ເປັນຂອງເກົ່າ

໓. ສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້ ກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້ ບໍ່ສະແຫວງຫາອັນບໍ່ສົມຄວນຍ້ອນເສນາສະນະເປັນເຫດ ບໍ່ໄດ້ເສນາສະນະກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈ ບໍ່ມົກມຸ້ນ ບໍ່ລຸ່ມຫຼົງ ເບິ່ງເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍຢູ່ ແລະບໍ່ຍົກຕົນຂົ່ມຜູ້ອື່ນຍ້ອນຄວາມສັນໂດດ ດ້ວຍເສນາສະນະຕາມແຕ່ຈະໄດ້ນັ້ນ ພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີສໍາປະຊັນຍະ ມີສະຕິໝັ້ນຄົງໃນຄວາມສັນໂດດ ດ້ວຍເສນາສະນະຕາມແຕ່ຈະໄດ້ ພິກຂຸນີ້ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າລໍ້າເລີດ ເປັນຂອງເກົ່າ

໔. ມີພາວະນາເປັນທີ່ພໍໃຈ ຍິນດີໃນພາວະນາ ມີປະຫານະ (ການລະ) ເປັນທີ່ພໍໃຈ ຍິນດີໃນປະຫານະ ແລະບໍ່ຍົກຕົນຂົ່ມຜູ້ອື່ນ ຍ້ອນຄວາມເປັນຜູ້ມີພາວະນາເປັນທີ່ພໍໃຈ ຍິນດີໃນພາວະນາ ຍ້ອນຄວາມເປັນຜູ້ມີປະຫານະເປັນທີ່ພໍໃຈຍິນດີໃນປະຫານະນັ້ນ ພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີສໍາປະ ຊັນຍະ ມີສະຕິໝັ້ນຄົງໃນພາວະນາ ແລະປະຫານະ ພິກຂຸນີ້ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າລໍ້າເລີດ ເປັນຂອງເກົ່າ

ພິກຂຸທັງຫຼາຍ ອະຣິຍະວົງ ໔ ປະການນີ້ ຮູ້ກັນວ່າລໍ້າເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອະຣິຍະວົງ ໔ ປະການນີ້ ແມ່ນຈະຢູ່ໃນທິດຕາເວັນອອກ ກໍຄອບງໍາຄວາມບໍ່ຍິນດີໄດ້ ຄວາມບໍ່ຍິນດີຄອບງໍາທ່ານບໍ່ໄດ້ ແມ່ນຈະຢູ່ໃນທິດຕາເວັນຕົກ ຯລຯ ແມ່ນຈະຢູ່ໃນທິດເໜືອ ຯລຯ ແມ່ນຈະຢູ່ໃນທິດໃຕ້ ກໍຄອບງໍາຄວາມບໍ່ຍິນດີໄດ້ ຄວາມບໍ່ຍິນດີຄອບງໍາທ່ານບໍ່ໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າທ່ານເປັນນັກປາດ ຊື່ວ່າ ເປັນຜູ້ຄອບງໍາຄວາມບໍ່ຍິນດີ ແລະຄວາມຍິນດີໄດ້ ຄວາມບໍ່ຍິນດີຄອບງໍານັກປາດ ບໍ່ໄດ້

ຄວາມບໍ່ຍິນດີຄອບງໍານັກປາດບໍ່ໄດ້
ແຕ່ນັກປາດຄອບງໍາຄວາມບໍ່ຍິນດີໄດ້
ເພາະນັກປາດຊື່ວ່າຜູ້ຄອບງໍາຄວາມບໍ່ຍິນດີ
ຣາຄະຫຼືໂທສະອັນໃດ
ຈະປິດກັ້ນບຸກຄົນຜູ້ບັນເທົາກິເລດແລ້ວ

ຜູ້ລະກຳທຸກຢ່າງໄດ້ເດັດຂາດ
ໃຜບໍ່ຈະສາມາດຕິຕຽນເຂົາ
    ຜູ້ເປັນເໝືອນແທ່ງຄຳຊົມພູນຸດ
ແມ່ນເທວະດາແລະມະນຸດກໍສັນເສີນເຂົາ
ເຖິງພົມກໍສັນເສີນເຂົາ

**ອະຣິຍະວັງສະສູດທີ ໘ ຈົບ**

## ໙. ທຳມະປະທະສູດ
### ວ່າດ້ວຍທຳມະບົດ

[໒໙] ພິກຂຸທັງຫຼາຍ ທຳມະບົດ ໔ ປະການນີ້ທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ທຳມະບົດ ໔ ປະການ ອັນໃດແດ່ ຄື

໑. ອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ) ເປັນທຳມະບົດທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ
໒. ອະພະຍາບາດ (ຄວາມບໍ່ຄິດຮ້າຍ) ເປັນທຳມະບົດ ຯລຯ
໓. ສຳມາສະຕິ (ຄວາມຣະນຶກຖືກ) ເປັນທຳມະບົດ ຯລຯ
໔. ສຳມາສະມາທິ (ຄວາມຕັ້ງຈິດໝັ້ນຖືກ) ເປັນທຳມະບົດທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ພິກຂຸທັງຫຼາຍ ທຳມະບົດ ໔ ປະການນີ້ແລ ທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

    ບຸກຄົນເພິ່ງເປັນຜູ້ບໍ່ມີອະພິດຊາຢູ່
ມີຈິດບໍ່ພະຍາບາດ ມີສະຕິ
ມີຈິດແນ່ວແນ່ ຕັ້ງໝັ້ນດີຢູ່ພາຍໃນ

**ທຳມະປະທະສູດທີ ໙ ຈົບ**

# ໑໐. ປະຣິບພາຊະກະສູດ

## ວ່າດ້ວຍປະຣິພາຊົກ

[໓໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ສະໄໝນັ້ນ ປະຣິພາຊົກຫຼາຍທ່ານທີ່ມີຊື່ສຽງເປັນທີ່ຮູ້ຈັກກັນ ອາໄສຢູ່ໃນປະຣິພາຊະກາຣາມ ແຄມຝັ່ງແມ່ນ້ຳສິບປີນີ ຄື ອັນນະພາຣະປະຣິພາຊົກ ວະທະຣະປະຣິພາຊົກ ສະກຸລຸທາຍີປະຣິພາ ຊົກ ແລະປະຣິພາຊົກທ່ານອື່ນ ໆ ທີ່ມີຊື່ສຽງເປັນທີ່ຮູ້ຈັກກັນ ເມື່ອໃນເວລາເຢັນ ພຣະຜູ້ມີພຣະ ພາກສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປສູ່ປະຣິພາຊະກາຣາມ ແຄມຝັ່ງແມ່ນ້ຳສິບປີນີ ປະ ທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດກັບປະຣິພາຊົກເຫຼົ່ານັ້ນດັ່ງນີ້ ວ່າ

"ປະຣິພາຊົກທັງຫຼາຍ ທຳມະບົດ ໔ ປະການນີ້ທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າ ເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກລຶບລ້າງ ບໍ່ຖືກ ສະມະນະພາມຜູ້ຮູ້ຄັດຄ້ານ

ທຳມະບົດ ໔ ປະການ ອັນໃດແດ່ ຄື

໑. ອະນະພິດຊາ ເປັນທຳມະບົດທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນ ອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະຈັກບໍ່ຖືກ ລຶບລ້າງ ບໍ່ຖືກສະມະນະ ພາມຜູ້ຮູ້ຄັດຄ້ານ

໒. ອະພະຍາບາດເປັນທຳມະບົດ ຯລຯ

໓. ສຳມາສະຕິເປັນທຳມະບົດ ຯລຯ

໔. ສຳມາສະມາທິເປັນທຳມະບົດທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນ ອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະ ຈັກບໍ່ຖືກ ລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ ຄັດຄ້ານ

ປະຣິພາຊົກທັງຫຼາຍ ທຳມະບົດ ໔ ປະການນີ້ແລ ທີ່ຮູ້ກັນວ່າ ລ້ຳເລີດ ຮູ້ກັນມາດົນ ຮູ້ ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ບໍ່ຖືກລຶບລ້າງ ບໍ່ເຄີຍຖືກລຶບລ້າງ ແລະ ຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ບຸກຄົນໃດ ເພິ່ງກ່າວແນວນີ້ວ່າ "ເຮົາຈັກບອກຄືນອະນະພິດຊາ ທີ່ເປັນທຳມະບົດນັ້ນແລ້ວ ບັນຍັດບຸກຄົນຜູ້ມີອະພິດຊາ ມີຣາຄະແຮງກ້າໃນກາມທັງຫຼາຍວ່າ ເປັນສະມະນະ ຫຼື ພາມ" ໃນ ເລື້ອງນັ້ນເຮົາເພິ່ງກ່າວກັບບຸກຄົນນັ້ນແນວນີ້ວ່າ "ຜູ້ທີ່ຖືກບັນຍັດວ່າເປັນສະມະນະ ຫຼື ພາມນັ້ນຈົ່ງ ມາ ຈົ່ງກ່າວ ຈົ່ງເວົ້າ ເຮົາຈັກເບິ່ງອານຸພາບຂອງເຂົາ" ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນ ຈັກບອກຄືນ

ອະນະພິດຊາ ທີ່ເປັນທຳມະບົດແລ້ວ ບັນຍັດບຸກຄົນຜູ້ມີອະພິດຊາ ມີຣາຄະ ແຮງກ້າໃນການທັງຫຼາຍວ່າເປັນສະມະນະ ຫຼື ພາມ

ບຸກຄົນໃດເພິ່ງກ່າວແນວນີ້ວ່າ "ເຮົາຈັກບອກຄືນ ອະພະຍາບາດ ທີ່ເປັນທຳມະບົດນັ້ນແລ້ວ ບັນຍັດບຸກຄົນຜູ້ມີຈິດພະຍາບາດ ມີຄວາມດຳຣິແຫ່ງຈິດຊົ່ວຮ້າຍວ່າ ເປັນສະມະນະ ຫຼື ພາມ" ໃນເລື້ອງນັ້ນເຮົາເພິ່ງກ່າວກັບບຸກຄົນນັ້ນແນວນີ້ວ່າ "ຜູ້ທີ່ຖືກບັນຍັດວ່າເປັນສະມະນະ ຫຼື ພາມນັ້ນ ຈົ່ງມາ ຈົ່ງກ່າວ ຈົ່ງເວົ້າ ເຮົາຈັກເບິ່ງອານຸພາບຂອງເຂົາ" ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນຈັກບອກຄືນອະພະຍາບາດທີ່ເປັນທຳມະບົດແລ້ວ ບັນຍັດບຸກຄົນຜູ້ມີຈິດພະຍາບາດ ມີຄວາມດຳຣິແຫ່ງຈິດຊົ່ວຮ້າຍວ່າເປັນສະມະນະ ຫຼື ພາມ

ບຸກຄົນໃດເພິ່ງກ່າວແນວນີ້ວ່າ "ເຮົາຈັກບອກຄືນ ສຳມາສະຕິ ທີ່ເປັນທຳມະບົດນັ້ນແລ້ວ ບັນຍັດບຸກຄົນຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະວ່າ ເປັນສະມະນະ ຫຼື ພາມ" ໃນເລື້ອງນັ້ນເຮົາເພິ່ງກ່າວກັບບຸກຄົນນັ້ນແນວນີ້ວ່າ "ຜູ້ທີ່ຖືກບັນຍັດວ່າເປັນສະມະນະ ຫຼື ພາມນັ້ນ ຈົ່ງມາ ຈົ່ງກ່າວ ຈົ່ງເວົ້າ ເຮົາຈັກເບິ່ງ ອານຸພາບຂອງເຂົາ" ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນ ຈັກບອກຄືນສຳມາສະຕິທີ່ເປັນທຳມະບົດແລ້ວ ບັນຍັດບຸກຄົນຜູ້ມີສະຕິຫຼົງລືມ ບໍ່ມີສຳປະຊັນຍະວ່າເປັນສະມະນະຫຼືພາມ

ບຸກຄົນໃດເພິ່ງກ່າວແນວນີ້ວ່າ "ເຮົາຈັກບອກຄືນ ສຳມາສະມາທິ ທີ່ເປັນທຳມະບົດນັ້ນແລ້ວ ບັນຍັດບຸກຄົນຜູ້ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງວ່າເປັນສະມະນະຫຼືພາມ" ໃນເລື້ອງນັ້ນເຮົາເພິ່ງກ່າວກັບບຸກຄົນນັ້ນແນວນີ້ວ່າ "ຜູ້ທີ່ຖືກບັນຍັດວ່າເປັນສະມະນະຫຼືພາມນັ້ນຈົ່ງມາ ຈົ່ງກ່າວ ຈົ່ງເວົ້າ ເຮົາຈັກເບິ່ງອານຸພາບຂອງເຂົາ" ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນ ຈັກບອກຄືນສຳມາສະມາທິທີ່ຈັດເປັນທຳມະບົດແລ້ວ ບັນຍັດບຸກຄົນຜູ້ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງວ່າ ເປັນສະມະນະຫຼືພາມ

ບຸກຄົນໃດສຳຄັນທຳມະບົດ ໔ ປະການນີ້ວ່າຄວນຕິຕຽນ ຄວນຄັດຄ້ານ ບຸກຄົນນັ້ນຍ່ອມໄດ້ຮັບຖານະ ໔ ປະການ ພ້ອມທັງເຫດໄປຕາມວາທະບໍ່ຊອບທຳ ທີ່ໜ້າຕິຕຽນ ໃນປັດຈຸບັນ ຖານະ ໔ ປະການ ອັນໃດແດ່ ຄື

໑. ຖ້າຕິຕຽນ ຄັດຄ້ານອະນະພິດຊາທີ່ຈັດເປັນທຳມະບົດ ກໍຊື່ວ່າເປັນຜູ້ບູຊາສັນເສີນສະມະ ນະຫຼືພາມຜູ້ມີອະພິດຊາ ມີຣາຄະແຮງກ້າໃນການທັງຫຼາຍ
໒. ຖ້າຕິຕຽນ ຄັດຄ້ານອະພະຍາບາດທີ່ຈັດເປັນທຳມະບົດ ກໍຊື່ວ່າເປັນຜູ້ບູຊາສັນເສີນສະມະ ນະຫຼືພາມຜູ້ມີຈິດພະຍາບາດ ມີຄວາມດຳຣິແຫ່ງຈິດຊົ່ວຮ້າຍ
໓. ຖ້າຕິຕຽນ ຄັດຄ້ານ ສຳມາສະຕິ ທີ່ຈັດເປັນທຳມະບົດ ກໍຊື່ວ່າເປັນຜູ້ບູຊາສັນເສີນສະມະ ນະຫຼືພາມຜູ້ມີສະຕິຫຼົງລືມ ບໍ່ມີສຳປະຊັນຍະ
໔. ຖ້າຕິຕຽນ ຄັດຄ້ານສຳມາສະມາທິທີ່ຈັດເປັນທຳມະບົດ ກໍຊື່ວ່າເປັນຜູ້ບູຊາສັນເສີນສະມະ ນະຫຼືພາມຜູ້ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ

ບຸກຄົນໃດສຳຄັນທຳມະບົດ ໔ ປະການນີ້ວ່າຄວນຕິຕຽນ ຄວນຄັດຄ້ານ ບຸກຄົນນັ້ນຍ່ອມໄດ້ຮັບຖານະ ໔ ປະການພ້ອມທັງເຫດໄປຕາມວາທະບໍ່ຊອບທຳ ທີ່ໜ້າຕິຕຽນ ໃນປັດຈຸບັນ ປະຣິພາຊົກຊື່ວັດສະ ແລະໄພຍະ ຜູ້ຢູ່ໃນອຸກກະລະຊົນນະບົດ ເປັນອະເຫຕຸກະວາທະ ອະກິຣິຍະວາທະ ນັດຖິກະວາທະ ສຳຄັນທຳມະບົດ ປະການນີ້ວ່າບໍ່ຄວນຕິຕຽນ ບໍ່ຄວນຄັດຄ້ານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຢ້ານການນິນທາ ການກະທົບກະທັ່ງ ແລະການເວົ້າໃສ່ຮ້າຍ”

ບຸກຄົນຜູ້ບໍ່ພະຍາບາດ
ມີສະຕິທຸກເມື່ອ ມີຈິດຕັ້ງໝັ້ນດີພາຍໃນ
ຜູ້ສຶກສາໃນທຳເປັນເຄື່ອງກຳຈັດອະພິດຊາ
ເຮົາຮຽກວ່າ ຜູ້ບໍ່ພະໝາດ

**ປະຣິບພາຊະກະສູດທີ ໑໐ ຈົບ**

**ອຸຣຸເວລະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖະມະອຸຣຸເວລະສູດ
໒. ທຸຕິຍະອຸຣຸເວລະສູດ
໓. ໂລກະສູດ
໔. ກາລະກາຣາມະສູດ
໕. ພົມມະຈະຣິຍະສູດ
໖. ກຸຫະສູດ
໗. ສັນຕຸດຖີສູດ
໘. ອະຣິຍະວັງສະສູດ
໙. ທຳມະປະທະສູດ
໑໐. ປະຣິບພາຊະກະສູດ

# ໔. ຈັກກະວັກ

## ໝວດວ່າດ້ວຍຈັກ

## ໑. ຈັກກະສູດ

### ວ່າດ້ວຍຈັກ ໔ ປະການ

[໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກ ໔ ປະການນີ້ເປັນເຫດໃຫ້ເທວະດາ ແລະມະນຸດຜູ້ປະກອບແລ້ວເປັນໄປໄດ້ ແລະເຖິງຄວາມເປັນໃຫຍ່ ຄວາມໄພບູນໃນໂພຄະທັງຫຼາຍຕໍ່ການບໍ່ດົນຫຼາຍ

ຈັກ ໔ ປະການ ອັນໃດແດ່ ຄື

໑. ປະຕິຣູປະເທສະວາສະ (ການຢູ່ໃນຖິ່ນທີ່ດີ)
໒. ສັບປຸຣິສູປັດສະຍະ (ການສະມາຄົມກັບສັດຕະບຸຣຸດ)
໓. ອັດຕະສໍາມາປະນິທິ (ການຕັ້ງຕົນໄວ້ຖືກ)
໔. ປຸບເພກະຕະປຸນຍະຕາ (ຄວາມເປັນຜູ້ໄດ້ທໍາຄວາມດີໄວ້ກ່ອນແລ້ວ)

ຈັກ ໔ ປະການນີ້ ເປັນເຫດໃຫ້ເທວະດາ ແລະມະນຸດຜູ້ປະກອບແລ້ວເປັນໄປໄດ້ ແລະເຖິງຄວາມເປັນໃຫຍ່ ຄວາມໄພບູນໃນໂພຄະທັງຫຼາຍຕໍ່ການບໍ່ດົນຫຼາຍ

ເຂົ້າເປືອກ ຊັບ ຍົດ ຊື່ສຽງ
ແລະຄວາມສຸກຍ່ອມຫຼັ່ງໄຫຼມາສູ່ນໍຣະຊົນ
ຜູ້ຢູ່ໃນຖິ່ນທີ່ດີ ຜູກໄມຕີກັບອະຣິຍະຊົນ
ສົມບູນດ້ວຍການຕັ້ງຕົນໄວ້ຖືກ ໄດ້ທໍາຄວາມດີໄວ້ກ່ອນແລ້ວ

**ຈັກກະສູດທີ ໑ ຈົບ**

## ໒. ສັງຄະຫະສູດ

## ວ່າດ້ວຍສັງຄະຫະວັດຖຸ

[໓໒] ພິກຂຸທັງຫຼາຍ ສັງຄະຫະວັດຖຸ (ທໍາເຄື່ອງຍຶດໜ່ຽວ) ໔ ປະການນີ້

ສັງຄະຫະວັດຖຸ ໔ ປະການ ອັນໃດແດ່ ຄື

໑. ທານ (ການໃຫ້)
໒. ເປີຍຍະວັດຊະ (ວາຈາເປັນທີ່ຮັກ)
໓. ອັດຖະຈະຣິຍາ (ການປະພຶດປະໂຫຍດ)
໔. ສະມານັດຕະຕາ (ການວາງຕົນສະໝໍ່າສະເໝີ)

ພິກຂຸທັງຫຼາຍ ສັງຄະຫະວັດຖຸ ໔ ປະການນີ້ແລ

ທານ ເປີຍຍະວັດຊະ ອັດຖະຈະຣິຍາໃນໂລກນີ້
ແລະສະມານັດຕະຕາໃນທໍານັ້ນ ໆ ຕາມສົມຄວນ
ສັງຄະຫະທໍາເຫຼົ່ານີ້ແລຊ່ອຍອຸ້ມຊູໂລກ
ເໝືອນຫຼີ້ມສະລັກທີ່ຍຶດຄຸມລົດເຊິ່ງແລ່ນໄປໄວ້ໄດ້

ຖ້າບໍ່ເພິ່ງມີທຳເຫຼົ່ານີ້ ມານດາຫຼືບິດາ
ກໍບໍ່ເພິ່ງໄດ້ການນັບຖືຫຼືການບູຊາຍ້ອນບຸດເປັນເຫດ
ແຕ່ຍ້ອນວ່າບັນດິດເລັງເຫັນຄວາມສຳຄັນຂອງສັງຄະຫະທຳເຫຼົ່ານີ້
ດັ່ງນັ້ນ ບັນດິດເຫຼົ່ານັ້ນຈຶ່ງເຖິງຄວາມເປັນໃຫຍ່
ແລະເປັນຜູ້ໜ້າສັນເສີນ

**ສັງຄະຫະສູດທີ ໘ ຈົບ**

## ໙. ສີຫະສູດ

## ວ່າດ້ວຍພະຍາຣາດຊະສີ

[໙໙] ພິກຂຸທັງຫຼາຍ ໃນເວລາເຢັນ ພະຍາຣາດຊະສີອອກຈາກບ່ອນອາໄສ ບິດກາຍຫຼຽວເບິ່ງຮອບ ໆ ທັງ ໔ ທິດ ບັນລືສີຫະນາດ ໓ ຄັ້ງແລ້ວຫຼີກໄປຫາເຫຍື່ອ ສ່ວນຫຼາຍ ສັດດິຣັດສານທີ່ໄດ້ຟັງພະຍາຣາດຊະສີບັນລືສີຫະນາດຍ່ອມເຖິງຄວາມຢ້ານ ຫວາດຫວັ່ນ ແລະສະດຸ້ງ ສັດພວກທີ່ອາໄສຢູ່ໃນໂພ້ງກໍຫຼົບເຂົ້າໂພ້ງ ພວກທີ່ຢູ່ໃນນ້ຳກໍດຳລົງໃນນ້ຳ ພວກທີ່ຢູ່ໃນປ່າກໍໜີເຂົ້າປ່າ ພວກສັດປີກກໍບິນຂຶ້ນສູ່ອາກາດ ພະຍາຊ້າງທີ່ຖືກລ່າມໄວ້ດ້ວຍເຄື່ອງຜູກຄືເຊືອກໜັງທີ່ໝັ້ນຄົງແຂງແຮງ ໃນໝູ່ບ້ານ ເຂດ ແລະເມືອງຫຼວງ ກໍດິ້ນລົນທຳລາຍເຄື່ອງຜູກເຫຼົ່ານັ້ນ ຕົກໃຈຢ້ານ ຖ່າຍມູດແລະຄູດ ໜີໄປທາງໃດທາງໜຶ່ງ ບັນດາສັດເດຍຣັດສານທັງຫຼາຍ ພະຍາຣາດຊະສີເປັນສັດມີລິດຫຼາຍ ແນວນີ້ ມີສັກຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້

ພິກຂຸທັງຫຼາຍ ເມື່ອໃດຕະຖາຄົດອຸບັດຂຶ້ນໃນໂລກ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງ ໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ສະແດງທຳວ່າ “ສັກກາຍະເປັນແນວນີ້ ສັກກາຍະສະມຸໄທ (ເຫດເກີດສັກກາຍະ) ເປັນແນວນີ້ ສັກກາຍະນິໂຣທະ (ຄວາມດັບສັກກາຍະ) ເປັນແນວນີ້ ສັກກາຍະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບສັກກາຍະ) ເປັນແນວນີ້” ເທວະດາພວກທີ່ມີອາຍຸຍືນ ມີວັນນະ ມີສຸກຫຼາຍ ສະຖິດຢູ່ໃນວິມານສູງເປັນເວລາດົນນານ ເມື່ອໄດ້ຟັງທຳມະເທດສະໜາຂອງຕະຖາຄົດແລ້ວ ສ່ວນຫຼາຍຍ່ອມເຖິງຄວາມຢ້ານ ຫວາດຫວັ່ນ ສະດຸ້ງວ່າ “ຜູ້ຈະເລີນທັງຫຼາຍ ຮູ້ມາວ່າ ພວກເຮົາເປັນຜູ້ບໍ່ທ່ຽງ ແຕ່ໄດ້ສຳຄັນຕົນວ່າ “ທ່ຽງ” ເປັນຜູ້ບໍ່ຍັ້ງຍືນ ແຕ່ໄດ້ສຳຄັນຕົນວ່າ “ຍັ້ງຍືນ” ເປັນຜູ້ບໍ່ຄົງທີ ແຕ່ໄດ້ສຳຄັນຕົນວ່າ “ຄົງທີ່” ທ່ານຜູ້ຈະເລີນທັງຫຼາຍ ພວກເຮົາເປັນຜູ້ບໍ່ທ່ຽງ ບໍ່ຍັ້ງຍືນ ບໍ່ຄົງທີ ກ່ຽວເນື່ອງຢູ່ໃນສັກກາຍະ” ດັ່ງນີ້ ບັນດາຊາວໂລກພ້ອມທັງເທວະໂລກ ຕະຖາຄົດເປັນຜູ້ມີລິດຫຼາຍແນວນີ້ ມີສັກຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ແນວນັ້ນຄືກັນ

ເມື່ອໃດພຣະພຸດທະເຈົ້າຜູ້ເປັນສາດສະດາ
ຜູ້ຫາບຸກຄົນປຽບທຽບບໍ່ໄດ້ ຕັດສະຣູ້ຍິ່ງແລ້ວ
ປະກາດທຳມະຈັກ ຄື
ສັກກາຍະ ເຫດເກີດສັກກາຍະ ຄວາມດັບສັກກາຍະ
ແລະອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມດັບທຸກ
ແກ່ໂລກພ້ອມທັງເທວະໂລກ
ເມື່ອນັ້ນເທວະດາທີ່ມີອາຍຸຍືນ ມີວັນນະ ມີຍົດ
ຫວາດຫວັ່ນ ຟັງຄຳຂອງຕະຖາຄົດ
ຜູ້ເປັນອະຣະຫັນ ຫຼຸດພົ້ນແລ້ວ ຜູ້ຄົງທີ່
ໄດ້ເຖິງຄວາມສະດຸ້ງຄືເນື້ອຍ້ານຣາດຊະສີ
ດ້ວຍຄິດວ່າ “ທ່ານຜູ້ຈະເລີນ ຮູ້ມາວ່າ
ພວກເຮົາເປັນຜູ້ບໍ່ທ່ຽງ ຍັງບໍ່ກ້າວລ່ວງສັກກາຍະ”

**ສີຫະສູດທີ ໓ ຈົບ**

## ໔. ອັກຄັບປະສາທະສູດ

### ວ່າດ້ວຍຄວາມເຫຼື້ອມໃສໃນສິ່ງທີ່ເລີດ

[໓໔] ພິກຂຸທັງຫຼາຍ ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໔ ປະການນີ້

ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໔ ປະການ ອັນໃດແດ່ ຄື

໑. ສັດທັງຫຼາຍທີ່ບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼື ມີຕີນຫຼາຍກໍຕາມ ມີຮູບຫຼືບໍ່ມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼື ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ເຮົາກ່າວວ່າເລີດກວ່າສັດມີປະມານທໍ່ນັ້ນ ບຸກຄົນຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດ ຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

໔. ທຳທີ່ຖືກປັດໄຈປຸງແຕ່ງມີປະມານທໍ່ໃດ ອະຣິຍະມັກມີອົງ ໘ ເຮົາກ່າວວ່າເລີດກວ່າທຳເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນອະຣິຍະມັກມີອົງ ໘ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

໓. ທຳທີ່ຖືກປັດໄຈປຸງແຕ່ງ ຫຼື ທຳທີ່ບໍ່ຖືກປັດໄຈປຸງແຕ່ງມີປະມານທໍ່ໃດ ວິຣາຄະ (ຄວາມຄາຍກຳໜັດ) ຄື ຄວາມສວ່າງຄວາມເມົາ ຄວາມດັບຄວາມກະຫາຍ ຄວາມຖອນອາໄລ ຄວາມຕັດ ວັດຕະ ຄວາມສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບທຸກ ນິບພານ ເຮົາກ່າວວ່າເລີດກວ່າທຳເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນວິຣາຄະທຳ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

໔. ໝູ່ກໍດີ ຄະນະກໍດີ ມີປະມານທໍ່ໃດ ພຣະສົງສາວົກຂອງຕະຖາຄົດ ໄດ້ແກ່ພຣະອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນຍອດຢ້ຽມຂອງໂລກ ເຮົາກ່າວວ່າເລີດກວ່າໝູ່ ຫຼື ຄະນະເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນສົງ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

ພິກຂຸທັງຫຼາຍ ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໔ ປະການນີ້ແລ

ບຸນທີ່ເລີດ ຄື ອາຍຸ ວັນນະ
ຍົດ ກຽດ ສຸກ ແລະ ພະລະ
ຍ່ອມຈະເລີນແກ່ບຸກຄົນຜູ້ເຫຼື້ອມໃສ
ຜູ້ຮູ້ທຳທີ່ເລີດໂດຍຄວາມເປັນທຳທີ່ເລີດ
ຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ເລີດ
ເຊິ່ງເປັນທັກຂິໄນຍະບຸກຄົນຊັ້ນເລີດ
ຜູ້ເຫຼື້ອມໃສໃນພຣະທຳທີ່ເລີດ
ອັນເປັນທີ່ຄາຍຄວາມກຳໜັດ
ເປັນທີ່ສະງົບຣະງັບ ນຳສຸກມາໃຫ້
ຜູ້ເຫຼື້ອມໃສໃນພຣະສົງຜູ້ເລີດ
ເຊິ່ງເປັນນາບຸນອັນປະເສີດ
ໃຫ້ທານໃນທ່ານຜູ້ເລີດ
ນັກປາດຜູ້ຕັ້ງໝັ້ນໃນທຳທີ່ເລີດ
ໃຫ້ທານແກ່ທ່ານຜູ້ເລີດ
ເກີດເປັນເທວະດາຫຼືມະນຸດກໍຕາມ
ຍ່ອມເຖິງຄວາມເປັນຜູ້ເລີດ໌ ບັນເທີງຢູ່

**ອັກຄັບປະສາທະສູດທີ ໔ ຈົບ**

# ໕. ວັດສະກາຣະສູດ
## ວ່າດ້ວຍວັດສະການພາມ

[໓໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ວັດສະການພາມ ຜູ້ເປັນມະຫາອຳມາດແຫ່ງແຄວັນມະຄົດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພວກຂ້າພະເຈົ້າບັນຍັດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ວ່າ ເປັນມະຫາບຸຣຸດຜູ້ມີປັນຍາຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

ບຸກຄົນໃນໂລກນີ້

໑. ເປັນພະຫູສູດແຫ່ງເລື້ອງທີ່ຟັງນັ້ນ ໆ ຮູ້ເນື້ອຄວາມແຫ່ງພາສິດນັ້ນ ໆ ວ່າ "ນີ້ເປັນເນື້ອຄວາມແຫ່ງພາສິດນີ້ ນີ້ເປັນເນື້ອຄວາມແຫ່ງພາສິດນີ້"

໒. ມີສະຕິ ຣະນຶກເຖິງສິ່ງທີ່ເຮັດ ແລະຄຳທີ່ເວົ້າແມ່ນດົນໄດ້

໓. ເປັນຄົນຂະຫຍັນ ບໍ່ຂີ້ຄ້ານໃນການງານທີ່ຈະຕ້ອງຊ່ອຍກັນເຮັດຂອງຄະລືຫັດ

໔. ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນການງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ໆ ສາມາດເຮັດໄດ້ ສາມາດຈັດໄດ້

ຂ້າແດ່ ທ່ານພຣະໂຄດົມ ພວກຂ້າພະເຈົ້າບັນຍັດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລວ່າ ເປັນມະຫາບຸຣຸດຜູ້ມີປັນຍາຫຼາຍ ຂ້າແດ່ທ່ານພຣະໂຄດົມ ຖ້າຂ້າພະເຈົ້າເພິ່ງຍິນດີ ຂໍທ່ານພຣະໂຄດົມຊົງຍິນດີນຳຂ້າພະເຈົ້າ ຖ້າຂ້າພະເຈົ້າເພິ່ງຄັດຄ້ານ ຂໍທ່ານພຣະໂຄດົມຊົງຄັດຄ້ານນຳ ຂ້າພະເຈົ້າແດ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາບໍ່ຍິນດີນຳ ແຕ່ບໍ່ຄັດຄ້ານທ່ານ ເຮົາບັນຍັດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການວ່າເປັນມະຫາບຸຣຸດຜູ້ມີປັນຍາຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

ບຸກຄົນໃນໂລກນີ້

໑. ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ໃຫ້ຄົນທັງຫຼາຍຕັ້ງຢູ່ໃນອະຣິຍະທຳທີ່ຄວນຮູ້ ຄື ຄວາມເປັນຜູ້ມີກັນລະຍານະທຳ ຄວາມເປັນຜູ້ມີກຸສົນທຳ

໔. ປາຖະໜາຈະໄຕ່ຕອງເລື້ອງໃດ ກໍໄຕ່ຕອງເລື້ອງນັ້ນ ບໍ່ປາຖະໜາຈະໄຕ່ຕອງເລື້ອງໃດ ກໍບໍ່ໄຕ່ຕອງເລື້ອງນັ້ນ ປາຖະໜາຈະດຳຣິເລື້ອງໃດ ກໍດຳຣິເລື້ອງນັ້ນ ບໍ່ປາຖະໜາຈະດຳຣິເລື້ອງໃດ ກໍບໍ່ດຳຣິເລື້ອງນັ້ນ ເຖິງຄວາມຊ່ຽວຊານໃນຈິດໃນແນວທາງແຫ່ງການໄຕ່ຕອງທັງຫຼາຍ

໓. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໔. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພາມ ເຮົາບໍ່ຍິນດີນຳ ແຕ່ບໍ່ຄັດຄ້ານທ່ານເລີຍ ເຮົາບັນຍັດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລວ່າ ເປັນມະຫາບຸຣຸດຜູ້ມີປັນຍາຫຼາຍ"

ວັດສະການພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທ່ານພຣະໂຄດົມຕັດເລື້ອງນີ້ໄວ້ດີຫຼາຍ ພວກຂ້າພະເຈົ້າຈະຊົງຈຳທ່ານພຣະໂຄດົມໄວ້ວ່າເປັນຜູ້ປະກອບດ້ວຍທຳ ໔ ປະການນີ້ ທ່ານພຣະໂຄດົມຊົງປະຕິບັດ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ໃຫ້ຄົນທັງຫຼາຍຕັ້ງຢູ່ໃນອະຣິຍະທຳທີ່ຄວນຮູ້ ຄື ຄວາມເປັນຜູ້ມີກັນລະຍານະທຳ ຄວາມເປັນຜູ້ມີກຸສົນທຳ ທ່ານພຣະໂຄດົມຊົງປາຖະໜາຈະໄຕ່ຕອງເລື້ອງໃດ ກໍໄຕ່ຕອງເລື້ອງນັ້ນ ບໍ່ຊົງປາຖະໜາຈະໄຕ່ຕອງເລື້ອງໃດ ກໍບໍ່ຊົງໄຕ່ຕອງເລື້ອງນັ້ນ ຊົງປາຖະໜາຈະດຳຣິເລື້ອງໃດ ກໍດຳຣິເລື້ອງນັ້ນ ບໍ່ຊົງປາຖະໜາຈະດຳຣິເລື້ອງໃດ ກໍບໍ່ດຳຣິເລື້ອງນັ້ນ ຊົງເຖິງຄວາມຊ່ຽວຊານໃນຈິດໃນແນວທາງແຫ່ງການໄຕ່ຕອງທັງຫຼາຍ ຊົງໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ຊົງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ທ່ານກ່າວວາຈາສະແດງຄວາມເຫັນດ້ວຍໃນເລື້ອງນີ້ ແລະເຮົາຈັກສະເໜລີຍແກ່ທ່ານວ່າ ແທ້ຈິງແລ້ວ ເຮົາປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍເພື່ອສຸກແກ່ຄົນທັງຫຼາຍ ໃຫ້ຄົນທັງຫຼາຍຕັ້ງຢູ່ໃນອະຣິຍະທຳທີ່ຄວນຮູ້ ຄື ຄວາມເປັນຜູ້ມີກັນລະຍານະທຳ ຄວາມເປັນຜູ້ມີກຸສົນທຳ ກໍເຮົາປາຖະໜາຈະໄຕ່ຕອງເລື້ອງໃດ ກໍໄຕ່ຕອງເລື້ອງນັ້ນ ບໍ່ປາຖະໜາຈະໄຕ່ຕອງເລື້ອງໃດ ກໍບໍ່ໄຕ່ຕອງເລື້ອງນັ້ນ ປາຖະໜາຈະດຳຣິເລື້ອງໃດ ກໍດຳຣິເລື້ອງນັ້ນ ບໍ່ປາຖະໜາຈະດຳຣິເລື້ອງໃດ ກໍບໍ່ດຳຣິເລື້ອງນັ້ນ ເຖິງຄວາມຊ່ຽວຊານໃນຈິດໃນແນວທາງແຫ່ງການໄຕ່ຕອງທັງຫຼາຍ ເຮົາໄດ້ຊານ ໔ ອັນມີໃນຈິຕຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍ ປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ບຸກຄົນຜູ້ຮູ້ແຈ້ງທາງປິດເປື້ອງສັບພະສັດ
ຈາກບ້ວງແຫ່ງມັດຈຸຣາດ ປະກາດທຳທີ່ຄວນຮູ້
ທີ່ເກື້ອກູນແກ່ເທວະດາແລະມະນຸດ
ອັນໜຶ່ງ ຊົນຈຳນວນຫຼາຍເຫຼື້ອມໃສ
ເພາະເຫັນຫຼືໄດ້ຟັງຂ່າວຂອງບຸກຄົນໃດ
ເຮົາຮຽກບຸກຄົນນັ້ນ
ຜູ້ສະຫຼາດໃນທຳທີ່ເປັນທາງແລະບໍ່ແມ່ນທາງ
ຜູ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ
ບໍ່ມີອາສະວະ ເປັນພຸດທະ
ມີຊາດສຸດທ້າຍວ່າ ເປັນມະຫາບຸຣຸດ

**ວັດສະກາຣະສູດທີ ໕ ຈົບ**

# ໖. ໂທນະສູດ

## ວ່າດ້ວຍໂທນະພາມ

[໓໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດທາງໄກລະຫວ່າງເມືອງອຸກກັດຖະ ກັບ ເມືອງ ເສຕັບພະຍະ ໂທນະພາມກໍໄດ້ເດີນທາງໄກລະຫວ່າງເມືອງອຸກກັດຖະກັບ ເມືອງເສຕັບ ພະຍະ ໄດ້ເຫັນຮອຍກົງຈັກມີຊີ່ກຳພັນຊີ່ ມີກົງ ມີດຸມຄົບ ມີສ່ວນປະກອບຄົບທຸກຢ່າງທີ່ຮອຍພຣະ ບາດຂອງພຣະຜູ້ມີ ພຣະພາກເຈົ້າ ໄດ້ມີຄວາມຄິດວ່າ "ທ່ານຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍ ພົບເຫັນ ຮອຍຕີນເຫຼົ່ານີ້ຄົງບໍ່ແມ່ນຮອຍຕີນມະນຸດ" ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລົງ ຂ້າງທາງປະທັບນັ່ງທີ່ເຫງົ້າ ໄມ້ຕົ້ນໜຶ່ງ ຊົງຄູ້ບັນລັງ ຕັ້ງກາຍກົງ ດຳຣົງສະຕິໄວ້ສະເພາະໜ້າ ລຳດັບນັ້ນ ໂທນະພາມຍ່າງຕາມຮອຍພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ໄດ້ເຫັນພຣະຜູ້ມີ ພຣະພາກເຈົ້າປະທັບນັ່ງທີ່ເຫງົ້າໄມ້ຕົ້ນໜຶ່ງ ມີພຣະອາການກິຣິຍາໜ້າພໍໃຈ ໜ້າເຫຼື້ອມໃສ ມີພຣະ ອິນຊີສະຫງົບ ມີພຣະຫະໄທສະຫງົບ ບັນລຸການເຝິກແລະຄວາມສະຫງົບອັນປະເສີດ ຊົງເຝິກຕົນແລ້ວ ຄຸ້ມຄອງແລ້ວ ສັງລວມອິນຊີ ຜູ້ຊື່ວ່າ ນາຄະ ຄັນແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ຈະເລີນເປັນເທວະດາແມ່ນຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເຮົາບໍ່ແມ່ນເທວະດາ ພາມ"
ໂທນະພາມທູນຖາມວ່າ "ທ່ານຜູ້ຈະເລີນ ເປັນຄົນທັບແມ່ນຫຼືບໍ່?"
"ເຮົາບໍ່ແມ່ນຄົນທັບ ພາມ"
"ທ່ານຜູ້ຈະເລີນ ເປັນຍັກແມ່ນຫຼືບໍ່?"

"ເຮົາບໍ່ແມ່ນຍັກ ພາມ"
"ທ່ານຜູ້ຈະເລີນ ເປັນມະນຸດແມ່ນຫຼືບໍ່?"
"ເຮົາບໍ່ແມ່ນມະນຸດ ພາມ"

ໂທນະພາມທູນຖາມວ່າ "ທ່ານເມື່ອຖືກຖາມວ່າ "ທ່ານຜູ້ຈະເລີນເປັນເທວະດາແມ່ນຫຼືບໍ່?" ກໍຕອບວ່າ "ເຮົາບໍ່ແມ່ນເທວະດາ ພາມ" ເມື່ອຖືກຖາມວ່າ "ທ່ານຜູ້ຈະເລີນເປັນຄົນທັນແມ່ນຫຼືບໍ່?" ກໍຕອບວ່າ "ເຮົາບໍ່ແມ່ນຄົນທັນ ພາມ" ເມື່ອຖືກຖາມວ່າ "ທ່ານຜູ້ຈະເລີນເປັນຍັກແມ່ນຫຼືບໍ່?" ກໍຕອບວ່າ "ເຮົາບໍ່ແມ່ນຍັກ ພາມ" ເມື່ອຖືກຖາມວ່າ "ທ່ານຜູ້ຈະເລີນ ເປັນມະນຸດແມ່ນຫຼືບໍ່?" ກໍຕອບວ່າ "ເຮົາບໍ່ແມ່ນມະນຸດ ພາມ" ຖ້າຢ່າງນັ້ນ ທ່ານເປັນອັນໃດກັນແທ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ເຮົາຄວນເປັນເທວະດາ ຍ້ອນຍັງລະອາສະວະເຫຼົ່າໃດບໍ່ໄດ້ ແຕ່ອາສະວະເຫຼົ່ານັ້ນເຮົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເຮົາເພິ່ງເປັນຄົນທັນ ຍ້ອນຍັງລະອາສະວະເຫຼົ່າໃດບໍ່ໄດ້ ຯລຯ ເພິ່ງເປັນຍັກ ຯລຯ ເພິ່ງເປັນມະນຸດ ຍ້ອນຍັງລະອາສະວະເຫຼົ່າໃດ ບໍ່ໄດ້ ແຕ່ອາສະວະເຫຼົ່ານັ້ນເຮົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ພາມ ເຮົາເກີດຈະເລີນເຕີບໂຕໃນໂລກ ແຕ່ຢູ່ເໜືອໂລກ ບໍ່ເປິເປື້ອນດ້ວຍໂລກຄືດອກອຸບົນ (ບົວຂຽວ) ດອກປະທຸມ (ບົວຫຼວງ) ດອກປຸນທະຣິກ (ບົວຂາວ) ເກີດຈະເລີນ ເຕີບໂຕໃນນ້ຳ ແຕ່ຢູ່ ເໜືອນ້ຳ ບໍ່ເປິເປື້ອນດ້ວຍນ້ຳແນວນັ້ນ ທ່ານຈົ່ງຈຳເຮົາໄວ້ວ່າ "ເປັນພຣະພຸດທະເຈົ້າ"

ອາສະວະທັງຫຼາຍທີ່ເປັນເຫດໃຫ້ເກີດເປັນເທວະດາ
ຫຼືເປັນຄົນທັນຜູ້ທ່ຽວໄປໃນອາກາດ
ເປັນເຫດໃຫ້ເຖິງຄວາມເປັນຍັກ
ແລະຄວາມເປັນມະນຸດ ໄດ້ສິ້ນສຸດໄປແລ້ວ
ຖືກເຮົາກຳຈັດແລ້ວ ເຮັດໃຫ້ໝົດເຄື່ອງຜູກພັນແລ້ວ
ດອກປຸນທະຣິກທີ່ງົດງາມ
ຍ່ອມບໍ່ເປິເປື້ອນດ້ວຍນ້ຳສັນໃດ
ເຮົາກໍຍ່ອມບໍ່ເປິເປື້ອນດ້ວຍໂລກສັນນັ້ນ
ພາມ ຍ້ອນເຫດນັ້ນ ເຮົາຈຶ່ງເປັນພຣະພຸດທະເຈົ້າ

**ໂທນະສູດທີ ໖ ຈົບ**

# ໗. ອະປະຣິຫານີຍະສູດ
## ວ່າດ້ວຍອະປະຣິຫານີຍະທຳ

[໖໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ບໍ່ອາດຈະເສື່ອມຊື່ວ່າ ຢູ່ໃກ້ນິບພານແນ່ແທ້

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສົມບູນດ້ວຍສິນ
໒. ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໓. ຮູ້ຈັກປະມານໃນການບໍຣິໂພກ
໔. ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ

ພິກຂຸສົມບູນດ້ວຍສິນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນ ສິກຂາບົດ ທັງຫຼາຍ ພິກຂຸສົມບູນດ້ວຍສິນ ເປັນແນວນີ້ແລ

ພິກຂຸຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯลฯ ດົມກິ່ນທາງດັງ ฯลฯ ຊີມຣົດທາງລີ້ນ ฯลฯ ຖືກຕ້ອງໂຜດທັດພະທາງກາຍ ฯลฯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີເຊິ່ງ ເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວນີ້ແລ

ພິກຂຸຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວຈຶ່ງສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອຄວາມດຳຣົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ດຳລົງຢູ່ໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍ

ຄິດເຫັນວ່າ "ເຮົາຈັກກໍາຈັດເວທະນາເກົ່າ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດໍາເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະການຢູ່ຜາສຸກຈັກມີແກ່ເຮົາ" ພິກຂຸຮູ້ຈັກປະມານໃນການບໍຣິໂພກເປັນແນວນີ້ແລ

ພິກຂຸປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຫດຂັດຂວາງດ້ວຍການຈົງກົມດ້ວຍການນັ່ງຕະຫຼອດວັນ ຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຫດຂັດຂວາງດ້ວຍການຈົງກົມດ້ວຍການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ນອນຄືຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສໍາປະຊັນຍະ ໝາຍໃຈວ່າຈະລຸກຂຶ້ນຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຫດຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດ ປັດສິມະຍາມແຫ່ງຣາຕີ ພິກຂຸປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໔ ປະການນີ້ແລ ບໍ່ອາດຈະເສື່ອມ ຊື່ວ່າ ຢູ່ໃກ້ນິບພານແນ່ແທ້

ພິກຂຸຕັ້ງຢູ່ໃນສີນ ສັງລວມອິນຊີ
ຮູ້ຈັກປະມານໃນການບໍຣິໂພກ
ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ
ມີຄວາມພຽນຢູ່ແນວນີ້
ບໍ່ຂີ້ຄ້ານຕະຫຼອດຄືນແລະວັນ
ຊື່ວ່າບໍາເພັນກຸສົນທໍາ
ເພື່ອບັນລຸສະພາວະອັນເປັນແດນກະເສມຈາກໂຍຄະ
ພິກຂຸຜູ້ຍິນດີໃນຄວາມບໍ່ຜະໝາດ
ຫຼືມີປົກກະຕິເຫັນໄພໃນຄວາມຜະໝາດ
ບໍ່ອາດຈະເສື່ອມ ຊື່ວ່າຢູ່ໃກ້ນິບພານແນ່ແທ້

**ອະປະຣິຫານິຍະສູດທີ ໗ ຈົບ**

## ໘. ປະຕິລີນະສູດ

### ວ່າດ້ວຍພິກຂຸຜູ້ຫຼີບຫຼີກ

[໓໘] ພິກຂຸທັງຫຼາຍ ເຮົາຮຽກພິກຂຸວ່າ ຜູ້ມີປັດເຈກສັດຈະ ອັນບັນເທົາໄດ້ ຜູ້ມີການສະແຫວງຫາອັນສະລະໄດ້ດີ ຜູ້ມີກາຍສັງຂານອັນຣະງັບໄດ້ ຜູ້ຫຼີບຫຼີກ

ພິກຂຸຜູ້ມີປັດເຈກສັດຈະອັນບັນເທົາໄດ້ ເປັນແນວໃດ?

ຄື ປັດເຈກສັດຈະຫຼວງຫຼາຍ ເຊັ່ນ ເຫັນວ່າ ໂລກທ່ຽງແດ່ ໂລກບໍ່ທ່ຽງແດ່ ໂລກມີບ່ອນສຸດແດ່ ໂລກບໍ່ມີບ່ອນສຸດແດ່ ຊີວະກັບສະຣີຣະເປັນອັນດຽວກັນ ຊີວະກັບສະຣີຣະເປັນຄົນລະອັນກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ເຫຼົ່ານັ້ນ ທັງໝົດຂອງສະມະນະ ແລະພາມຈຳນວນຫຼາຍ ອັນພິກຂຸໃນທຳວິໄນນີ້ບັນເທົາໄດ້ ກຳຈັດໄດ້ ສະລະໄດ້ ຄາຍໄດ້ ປ່ອຍວາງໄດ້ ລະໄດ້ ສະລະຄືນໄດ້ ພິກຂຸຜູ້ມີປັດເຈກສັດຈະອັນບັນເທົາໄດ້ ເປັນແນວນີ້ແລ

ພິກຂຸຜູ້ມີການສະແຫວງຫາອັນສະລະໄດ້ດີ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະການໃຝ່ຫາກາມ ລະການສະແຫວງຫາພົບ ຣະງັບການສະແຫວງຫາພົມມະຈັນໄດ້ ພິກຂຸຜູ້ມີການສະແຫວງຫາອັນສະລະໄດ້ດີ ເປັນແນວນີ້ແລ

ພິກຂຸຜູ້ມີກາຍສັງຂານອັນຣະງັບໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ພິກຂຸຜູ້ມີກາຍສັງຂານອັນຣະງັບໄດ້ ເປັນແນວນີ້ແລ

ພິກຂຸຜູ້ຫຼີບຫຼີກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະອັດມິມານະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຜູ້ຫຼີບຫຼີກເປັນແນວນີ້ແລ

ເຮົາຮຽກພິກຂຸວ່າ ຜູ້ມີປັດເຈກສັດຈະອັນບັນເທົາໄດ້ ຜູ້ມີການສະແຫວງຫາອັນສະລະໄດ້ດີ ຜູ້ມີກາຍສັງຂານອັນຣະງັບໄດ້ ຜູ້ຫຼີບຫຼີກ ດ້ວຍປະການດັ່ງນີ້

ການໃຝ່ຫາກາມ ການສະແຫວງຫາພົບ
ແລະການສະແຫວງຫາພົມມະຈັນ
ອັນພິກຂຸໃນທຳວິໄນນີ້ສະລະໄດ້ເດັດຂາດແລ້ວ
ການຍຶດຖືວ່າສິ່ງນັ້ນສິ່ງນີ້ຈິງແທ້ເປັນພື້ນຖານແຫ່ງທິດຖິ
ພິກຂຸຖອນຂຶ້ນແລ້ວດ້ວຍອາການແນວນີ້

ພິກຂຸຜູ້ຄາຍກຳໜັດໄດ້ທັງໝົດ
ຫຼຸດພົ້ນຍ້ອນໝົດສິ້ນຕັນຫາ
ຊື່ວ່າສະລະຄືນການສະແຫວງຫາ
    ຖອນຮາກຖານແຫ່ງທິດຖິໄດ້
ພິກຂຸນັ້ນເປັນຜູ້ສະງົບ
ມີສະຕິ ສະງົບຣະງັບ ບໍ່ພ່າຍແພ້
ຊື່ວ່າເປັນພຸດທະ ຍ້ອນລະມານະໄດ້
ເຮົາຮຽກວ່າ ຜູ້ຫຼີບຫຼີກ

**ປະຕິລີນະສູດທີ ໗ ຈົບ**

## ໘. ອຸດຊະຍະສູດ

### ວ່າດ້ວຍບັນຫາຂອງອຸດຊະຍະພາມ

[໓໙] ສະໄໝນັ້ນ ອຸດຊະຍະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ແມ່ນທ່ານພຣະໂຄດົມເອງກໍຊົງສັນເສີນຍັນຂອງພວກຂ້າພະເຈົ້າບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາບໍ່ໄດ້ສັນເສີນຍັນໄປໝົດທຸກຢ່າງ ແລະ ເຮົາກໍບໍ່ໄດ້ຕິຕຽນຍັນໄປທັງໝົດ ເຮົາບໍ່ສັນເສີນຍັນທີ່ມີກິຣິຍາ ໑ ຄື ຍັນທີ່ມີການຂ້າງົວ ໑ ຍັນທີ່ມີການຂ້າແບ້ ແກະ ໑ ຍັນທີ່ມີການຂ້າໄກ່ ໝູ ໑ ຍັນທີ່ເຮັດໃຫ້ສັດຕ່າງ ໆ ໄດ້ຮັບຄວາມເດືອດຮ້ອນ ໑ ຂໍ້ນັ້ນ ຍ້ອນເຫດໃດ ຍ່ອນວ່າພຣະອະຣະຫັນ ຫຼື ທ່ານຜູ້ບັນລຸອະຣະຫັດຕະມັກ ຍ່ອມບໍ່ກ່ຽວຂ້ອງກັບຍັນທີ່ມີກິຣິຍາແນວນັ້ນ

ພາມ ແຕ່ເຮົາສັນເສີນຍັນທີ່ບໍ່ມີກິຣິຍາ ຄື ນິດທານ ໑ ແລະອະນຸກູນຍັນ ໔ ຄື ຍັນທີ່ບໍ່ມີການຂ້າງົວ ໑ ຍັນທີ່ບໍ່ມີການຂ້າແບ້ ແກະ ໑ ຍັນທີ່ບໍ່ມີການຂ້າໄກ່ ໝູ ໑ ຍັນທີ່ບໍ່ເຮັດໃຫ້ສັດຕ່າງ ໆ ໄດ້ຮັບຄວາມເດືອດຮ້ອນ ໑ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າ ພຣະອະຣະຫັນ ຫຼື ທ່ານຜູ້ບັນລຸອະຣະຫັດຕະມັກຍ່ອມກ່ຽວຂ້ອງກັບຍັນທີ່ບໍ່ມີກິຣິຍາແນວນີ້"

    ມະຫາຍັນທີ່ມີກິຣິຍາຫຼາຍເຫຼົ່ານີ້ ຄື
ອັດສະວະເມທະ ປຸຣຸສະເມທະ ສຳມາປາສະ
ວາຊະເປີຍຍະ ນິຣັກຄະລະ ບໍ່ມີຜົນຫຼາຍ
ພຣະອະຣິຍະຜູ້ປະຕິບັດຖືກ ສະແຫວງຫາຄຸນຍິ່ງໃຫຍ່

ຍ່ອມບໍ່ກ່ຽວຂ້ອງກັບຍັນ
ທີ່ມີການຂ້າແບ້ ແກະ ງົວ ແລະສັດຕ່າງ ໆ
ແຕ່ພຣະອະຣິຍະຜູ້ປະຕິບັດຖືກ ສະແຫວງຫາຄຸນຍິ່ງໃຫຍ່
ຍ່ອມກ່ຽວຂ້ອງກັບຍັນທີ່ບໍ່ມີກິຣິຍາ
ເອື້ອອຳນວຍປະໂຫຍດ ປະຊາຊົນບູຊາທຸກເມື່ອ
ແລະບໍ່ມີການຂ້າແບ້ ແກະ ງົວ ແລະສັດຕ່າງ ໆ
ນັກປາດເພິ່ງບູຊາຍັນນີ້ທີ່ມີຜົນຫຼາຍ
ຍ້ອນວ່າເມື່ອບູຊາຍັນແນວນີ້
ຍ່ອມມີແຕ່ຄວາມດີ ບໍ່ມີຄວາມຊົ່ວ
ຍັນຍ່ອມແຜ່ຫຼາຍ ແລະເທວະດາກໍເຫຼື້ອມໃສ

**ອຸດຊະຍະສູດທີ ໙ ຈົບ**

## ໑໐. ອຸທາຍີສູດ

### ວ່າດ້ວຍບັນຫາຂອງອຸທາຍີພາມ

[໔໐] ຄັ້ງນັ້ນແລ ອຸທາຍີພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ “ແມ່ນທ່ານພຣະໂຄດົມ ກໍຊົງສັນເສີນຍັນຂອງພວກຂ້າພຣະອົງແມ່ນບໍ?”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພາມ ເຮົາບໍ່ໄດ້ສັນເສີນຍັນໄປໝົດທຸກຢ່າງ ແລະເຮົາກໍບໍ່ໄດ້ຕິຕຽນຍັນໄປທັງໝົດ ເຮົາບໍ່ສັນເສີນຍັນທີ່ມີກິຣິຍາ ຄື ຍັນທີ່ມີການຂ້າງົວ ໑ ຍັນທີ່ມີການຂ້າແບ້ ແກະ ໑ ຍັນທີ່ມີການຂ້າໄກ່ ໝູ ໑ ຍັນທີ່ເຮັດໃຫ້ສັດຕ່າງ ໆ ໄດ້ຮັບຄວາມເດືອດຮ້ອນ ໑ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພຣະອະຣະຫັນ ຫຼື ທ່ານຜູ້ບັນລຸອະຣະຫັດຕະມັກ ຍ່ອມບໍ່ກ່ຽວຂ້ອງກັບຍັນທີ່ມີກິຣິຍາແນວນັ້ນ

ພາມ ແຕ່ເຮົາສັນເສີນຍັນທີ່ບໍ່ມີກິຣິຍາ ຄື ນິດທານ ແລະອະນຸກູລະຍັນ ຄື ຍັນທີ່ບໍ່ມີການຂ້າງົວ ໑ ຍັນທີ່ບໍ່ມີການຂ້າແບ້ ແກະ ໑ ຍັນທີ່ບໍ່ມີການຂ້າໄກ່ ໝູ ໑ ຍັນທີ່ບໍ່ເຮັດໃຫ້ສັດຕ່າງ ໆ ໄດ້ຮັບຄວາມເດືອດຮ້ອນ ໑ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພຣະອະຣະຫັນ ຫຼື ທ່ານຜູ້ບັນລຸອະຣະຫັດຕະມັກຍ່ອມກ່ຽວຂ້ອງກັບຍັນທີ່ບໍ່ມີກິຣິຍາແນວນີ້”

ທ່ານຜູ້ປະພຶດພົມມະຈັນ ສັງລວມຣະວັງ

ຍ່ອມກ່ຽວຂ້ອງກັບຍັນທີ່ຈັດຕຽມໄວ້ຢ່າງດີ
ບໍ່ມີກິຣິຍາ ເໝາະສົມກັບເວລາເຊັ່ນນັ້ນ
ທ່ານຜູ້ຮູ້ຜູ້ສະຫຼາດໃນບຸນ
ມີກິເລດປຽບຄືຫຼັງຄາອັນເປີດແລ້ວ
ລ່ວງເລີຍຕະກູນແລະຄະຕີໃນໂລກ
ຍ່ອມສັນເສີນຍັນຊະນິດນີ້

ຖ້າບຸກຄົນທຳການບູຊາໃນປົກກະຕິທານ
ຫຼືໃນມະຕະກະທານຕາມສົມຄວນ
ມີຈິດເຫຼື້ອມໃສ ບູຊາໃນນາທີ່ດີ
ຄືທ່ານພົມມະຈາຣີທັງຫຼາຍ
ຍັນທີ່ບຸກຄົນບູຊາດີແລ້ວ
ບວງສວງດີແລ້ວ ສົມບູນດີ
ເຮັດໄວ້ໃນທັກຂິໄນຍະບຸກຄົນ
ຍັນຍ່ອມແຜ່ຫຼາຍ ແລະເທວະດາກໍເຫຼື້ອມໃສ

ບັນດິດຜູ້ເປັນນັກປາດ ມີສັດທາ
ມີໃຈພົ້ນແລ້ວ ບູຊາຍັນແນວນີ້ແລ້ວ
ຍ່ອມເຂົ້າເຖິງໂລກທີ່ປາສະຈາກຄວາມບຽດບຽນ ເປັນສຸກ

**ອຸທາຍິສູດທີ ໑໐ ຈົບ**

**ຈັກກະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຈັກກະສູດ
໒. ສີຫະສູດ
໓. ວັດສະກາຣະສູດ
໗. ອະປະຣິຫານິຍະສູດ
໙. ອຸດຊະຍະສູດ
໔. ສັງຄະຫະສູດ
໔. ອັກຄັບປະສາທະສູດ
໖. ໂທນະສູດ
໗. ປະຕິລິນະສູດ
໑໐. ອຸທາຍິສູດ

# ໕. ໂຣຫິຕັດສະວັກ

## ໝວດວ່າດ້ວຍໂຣຫິຕັດສະເທບພະບຸດ

## ໑. ສະມາທິພາວະນາສູດ

### ວ່າດ້ວຍສະມາທິພາວະນາ

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະມາທິພາວະນາ ໔ ປະການນີ້ ສະມາທິພາວະນາ ໔ ປະການ ອັນໃດແດ່ ຄື

໑. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ
໒. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ຍານທັດສະນະ
໓. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສະຕິສຳປະຊັນຍະ
໔. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດສິ້ນອາສະວະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ເພາະປີຕິຈາງຄາຍໄປ ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ຍານທັດສະນະເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ມະນະສິການເຖິງອາໂລກະສັນຍາ (ຄວາມກຳນົດໝາຍໃນແສງສະຫວ່າງ) ອະທິຖານທິວາສັນຍາ (ຄວາມກຳນົດໝາຍວ່າກາງເວັນ) ວ່າ ກາງຄືນເໝືອນກາງເວັນ ກາງເວັນເໝືອນກາງຄືນ ມີໃຈສະຫງັດບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອໄດ້ຍານທັດສະນະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສະຕິສຳປະຊັນຍະເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງເວທະນາທີ່ເກີດຂຶ້ນ ຮູ້ແຈ້ງເວທະນາທີ່ຕັ້ງຢູ່ ຮູ້ແຈ້ງເວທະນາທີ່ດັບໄປ ຮູ້ແຈ້ງສັນຍາທີ່ເກີດຂຶ້ນ ຯລຯ ຮູ້ແຈ້ງວິຕົກທີ່ເກີດຂຶ້ນ ຮູ້ແຈ້ງວິຕົກທີ່ຕັ້ງຢູ່ ຮູ້ແຈ້ງວິຕົກທີ່ດັບໄປ ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສະຕິສຳປະຊັນຍະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດສິ້ນອາສະວະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ມີປົກກະຕິເຫັນຄວາມເກີດຂຶ້ນ ແລະຄວາມເສື່ອມໄປໃນອຸປາທານຂັນ ໕ ຢູ່ວ່າ "ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້ ເວທະນາເປັນແນວນີ້ ຄວາມເກີດຂຶ້ນແຫ່ງເວທະນາເປັນແນວນີ້ ຄວາມດັບແຫ່ງເວທະນາ ເປັນແນວນີ້ ສັນຍາເປັນແນວນີ້ ຄວາມເກີດຂຶ້ນແຫ່ງສັນຍາເປັນແນວນີ້ ຄວາມດັບແຫ່ງສັນຍາເປັນແນວນີ້ ສັງຂານເປັນແນວນີ້ ຄວາມເກີດຂຶ້ນແຫ່ງສັງຂານເປັນແນວນີ້ ຄວາມດັບແຫ່ງສັງຂານເປັນແນວນີ້ ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້" ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດສິ້ນອາສະວະ

ພິກຂຸທັງຫຼາຍ ສະມາທິພາວະນາ ໔ ປະການນີ້ແລ

ພິກຂຸທັງຫຼາຍ ກໍຄຳນີ້ເຮົາກ່າວໄວ້ໃນປຸນນະກະບັນຫາໃນປາຣາຍະນະວັກ ໝາຍເຖິງຂໍ້ຄວາມນີ້ ວ່າ

ບຸກຄົນໃດຮູ້ສິ່ງສູງຕ່ຳໃນໂລກ
ບໍ່ມີກິເລດເປັນເຫດໃຫ້ຫວັ່ນໄຫວໃນໂລກໃດ ໆ
ເຮົາກ່າວວ່າ ບຸກຄົນເປັນຜູ້ສະງົບ
ບໍ່ມີຄວັນຄືຄວາມໂກດ

ບໍ່ມີກິເລດກະທົບຈິດ ບໍ່ມີຄວາມຫວັງ
ຂ້າມພົ້ນຊາດແລະຊະຣາໄດ້ແລ້ວ

**ສະມາທິພາວະນາສູດທີ ໑ ຈົບ**

## ໒. ປັນຫະພະຍາກະຣະນະສູດ

### ວ່າດ້ວຍວິທີການຕອບບັນຫາ

[໔໒] ພິກຂຸທັງຫຼາຍ ການຕອບບັນຫາ ໔ ປະການນີ້

ການຕອບບັນຫາ ໔ ປະການ ອັນໃດແດ່? ຄື

| | |
|---|---|
| ໑. ເອກັງສະພະຍາກະຣະນີຍະບັນຫາ | (ບັນຫາທີ່ຄວນຕອບໂດຍໄນດຽວ) |
| ໒. ວິພັດຊະພະຍາກະຣະນີຍະບັນຫາ | (ບັນຫາທີ່ຄວນແຍກຕອບ) |
| ໓. ປະຕິປຸດສາພະຍາກະຣະນີຍະບັນຫາ | (ບັນຫາທີ່ຄວນຕອບໂດຍຍ້ອນຖາມ) |
| ໔. ຖະປະນີຍະບັນຫາ | (ບັນຫາທີ່ຄວນງົດຕອບ) |

ພິກຂຸທັງຫຼາຍ ການຕອບບັນຫາ ໔ ປະການນີ້ແລ

| | |
|---|---|
| (໑). ຕອບໂດຍໄນດຽວ | (໒). ແຍກຕອບ |
| (໓). ຕອບໂດຍຍ້ອນຖາມ | (໔). ງົດຕອບ |

ອັນໜຶ່ງ ບັນດິດຮຽກພິກຂຸຜູ້ຮູ້ຄວາມເໝາະສົມ
ໃນຖານະແຫ່ງບັນຫານັ້ນ ໆ ວ່າ
ເປັນຜູ້ສະຫຼາດໃນບັນຫາທັງ ໔
ບຸກຄົນເຊັ່ນນັ້ນ ໃຜ ໆ ທຽບໄດ້ຍາກ
ເອົາຊະນະໄດ້ຍາກ ເປັນຄົນເລິກເຊິ່ງ ເຮັດໃຫ້ພ່າຍແພ້ໄດ້ຍາກ
ແລະສະຫຼາດໃນປະໂຫຍດທັງສອງ
ຄື ດ້ານຈະເລີນແລະດ້ານເສື່ອມ
ບັນດິດຍ່ອມເວັ້ນດ້ານເສື່ອມ ຖືເອົາດ້ານຈະເລີນ
ທີຣະຊົນຍ້ອນຮູ້ຈັກປະໂຫຍດ
ຊາວໂລກຈຶ່ງຮຽກວ່າ “ບັນດິດ”

**ປັນຫະພະຍາກະຣະນະສູດທີ ໒ ຈົບ**

## ໓. ປະຖະມະໂກທະຄະຣຸສູດ

## ວ່າດ້ວຍບຸກຄົນຜູ້ມັກໂກດ ສູດທີ ໑

[໔໓] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ມັກໂກດ ບໍ່ເຄົາລົບສັດທຳ
໒. ບຸກຄົນຜູ້ມັກລົບຫຼູ່ ບໍ່ເຄົາລົບສັດທຳ
໓. ບຸກຄົນຜູ້ເຫັນແກ່ລາບ ບໍ່ເຄົາລົບສັດທຳ
໔. ບຸກຄົນຜູ້ເຫັນແກ່ສັກກາຣະ ບໍ່ເຄົາລົບສັດທຳ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ
ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ເຄົາລົບສັດທຳ ບໍ່ມັກໂກດ
໒. ບຸກຄົນຜູ້ເຄົາລົບສັດທຳ ບໍ່ມັກລົບຫຼູ່
໓. ບຸກຄົນຜູ້ເຄົາລົບສັດທຳ ບໍເຫັນແກ່ລາບ
໔. ບຸກຄົນຜູ້ເຄົາລົບສັດທຳ ບໍ່ເຫັນແກ່ສັກກາຣະ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ພິກຂຸຜູ້ມັກໂກດ ມັກລົບຫຼູ່
ເຫັນແກ່ລາບແລະເຫັນແກ່ສັກກາຣະ
ຍ່ອມບໍ່ງອກງາມໃນທຳ
ທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ສ່ວນພິກຂຸຜູ້ເຄົາລົບສັດທຳ
ທັງໃນອະດີດແລະປັດຈຸບັນ ຍ່ອມງອກງາມໃນທຳ
ທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ

**ປະຖະມະໂກທະຄະຣຸສູດທີ ໓ ຈົບ**

# ໔. ທຸຕິຍະໂກທະຄະຣຸສູດ

## ວ່າດ້ວຍບຸກຄົນຜູ້ມັກໂກດ ສູດທີ ໔

[໔໔] ພິກຂຸທັງຫຼາຍ ອະສັດທຳ ໔ ປະການນີ້

ອະສັດທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກໂກດ ບໍ່ເຄົາລົບສັດທຳ
໒. ຄວາມເປັນຜູ້ມັກລົບຫຼູ່ ບໍ່ເຄົາລົບສັດທຳ
໓. ຄວາມເປັນຜູ້ເຫັນແກ່ລາບ ບໍ່ເຄົາລົບສັດທຳ
໔. ຄວາມເປັນຜູ້ເຫັນແກ່ສັກກາຣະ ບໍ່ເຄົາລົບສັດທຳ

ພິກຂຸທັງຫຼາຍ ອະສັດທຳ ໔ ປະການນີ້ແລ

ພິກຂຸທັງຫຼາຍ ສັດທຳ ໔ ປະການນີ້
ສັດທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ເຄົາລົບສັດທຳ ບໍ່ເປັນຜູ້ມັກໂກດ
໒. ຄວາມເປັນຜູ້ເຄົາລົບສັດທຳ ບໍ່ເປັນຜູ້ມັກລົບຫຼູ່
໓. ຄວາມເປັນຜູ້ເຄົາລົບສັດທຳ ບໍ່ເປັນຜູ້ເຫັນແກ່ລາບ
໔. ຄວາມເປັນຜູ້ເຄົາລົບສັດທຳ ບໍ່ເປັນຜູ້ເຫັນແກ່ສັກກາຣະ

ພິກຂຸທັງຫຼາຍ ສັດທຳ ໔ ປະການນີ້ແລ

ພິກຂຸຜູ້ມັກໂກດ ມັກລົບຫຼູ່
ເຫັນແກ່ລາບແລະເຫັນແກ່ສັກກາຣະ
ຍ່ອມບໍ່ງອກງາມໃນສັດທຳ
ເໝືອນພືດທີ່ຫວ່ານໄວ້ໃນນາບໍ່ດີ
ສ່ວນພິກຂຸຜູ້ເຄົາລົບສັດທຳ
ທັງໃນອະດີດແລະປັດຈຸບັນ ຍ່ອມງອກງາມໃນທຳ
ເໝືອນຕົ້ນໄມ້ງອກງາມຍ້ອນຢາງໜຽວສັນນັ້ນ

**ທຸຕິຍະໂກທະຄະຣຸສູດທີ ໔ ຈົບ**

# ໕. ໂຣຫິຕັດສະສູດ

## ວ່າດ້ວຍໂຣຫິຕັດສະເທບພະບຸດ

[໘໕] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ໂຣຫິຕັດສະເທບພະບຸດເມື່ອຣາຕີຜ່ານໄປ ມີວັນນະງາມຍິ່ງ ເຮັດພຣະເຊຕະວັນທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງສາມາດທີ່ຈະຊົງຮູ້ ຊົງເຫັນ ຫຼື ຊົງເຖິງທີ່ສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດດ້ວຍການໄປແມ່ນບໍ່ນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ"

ໂຣຫິຕັດສະເທບພະບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຫຼາຍວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ"

ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ຂ້າພຣະອົງເປັນລືສີຊື່ ໂຣຫິຕັດສະເປັນບຸດຂອງນາຍບ້ານ ມີລິດເຫາະໄດ້ ຄວາມໄວຂອງຂ້າພຣະອົງນັ້ນປຽບໄດ້ກັບນາຍຂະມັງທະນູ ຜູ້ຍິງທະນູແມ່ນຍຳ ສຶກສາມາດີແລ້ວ ຜູ້ຊ່ຽວຊານ ເຝິກຊ້ອມມາດີ ຍິງລູກສອນເບົາໃຫ້ຜ່ານເງົາຕານດ້ານຂວາງໄດ້ໂດຍບໍ່ຍາກ ການກ້າວຍ່າງແຕ່ລະບາດກ້າວຂອງຂ້າພຣະອົງ ປຽບໄດ້ກັບຣະຍະທາງຈາກທະເລດ້ານຕາເວັນອອກເຖິງທະເລດ້ານຕາເວັນຕົກແນວນັ້ນ ຄວາມປາຖະໜາແນວນີ້ວ່າ "ເຮົາຈັກເຖິງບ່ອນສຸດແຫ່ງໂລກດ້ວຍການໄປ" ເກີດແກ່ຂ້າພຣະອົງນັ້ນ ຜູ້ພຽບພ້ອມດ້ວຍຄວາມໄວ ແລະການກ້າວຍ່າງແນວນີ້ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນແລເວັ້ນຈາກການກິນ ການດື່ມ ການຫຍ້ຳ ການຊີມ ການຖ່າຍອຸດຈາຣະ ປັດສາວະ ການຫຼັບ ແລະການບັນເທົາຄວາມເມື່ອຍລ້າ ມີອາຍຸ ໑໐໐ ປີ ດຳຣົງຊີບຢູ່ໄດ້ຕັ້ງ ໑໐໐ ປີ ດຳເນີນໄປໄດ້ຕັ້ງ ໑໐໐ ປີ ຍັງບໍ່ເຖິງບ່ອນສຸດແຫ່ງໂລກກໍຕາຍສາກ່ອນໃນລະຫວ່າງທາງ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຫຼາຍວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ ເຮົາບໍ່ກ່າວວ່າ ການທີ່ບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກຈະເຮັດບ່ອນສຸດແຫ່ງທຸກໄດ້

ອັນໜຶ່ງ ເຮົາບັນຍັດໂລກ ຄວາມເກີດແຫ່ງໂລກ ຄວາມດັບແຫ່ງໂລກ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງໂລກ ໃນຮ່າງກາຍທີ່ມີປະມານວາໜຶ່ງ ມີສັນຍາ ມີໃຈນີ້ເອງ"

ບໍ່ວ່າໃນເວລາໃດ ບ່ອນສຸດແຫ່ງໂລກ
ໃຜກໍເຖິງບໍ່ໄດ້ດ້ວຍການໄປ
ແລະເມື່ອຍັງບໍ່ເຖິງບ່ອນສຸດແຫ່ງໂລກ
ຍ່ອມບໍ່ມີການປົດເປື້ອງຕົນຈາກທຸກ
ຍ້ອນເຫດນັ້ນແລ ຜູ້ຮູ້ແຈ້ງໂລກ ມີປັນຍາດີ
ເຖິງບ່ອນສຸດແຫ່ງໂລກ ຢູ່ຈົບພົມມະຈັນ
ສະງົບຣະງັບ ຮູ້ບ່ອນສຸດແຫ່ງໂລກ
ຍ່ອມບໍ່ຫວັງທັງໂລກນີ້ແລະໂລກໜ້າ

**ໂຣຫິຕັດສະສູດທີ ໕ ຈົບ**

## ໖. ທຸຕິຍະໂຣຫິຕັດສະສູດ

### ວ່າດ້ວຍໂຣຫິຕັດສະເທບພະບຸດ ສູດທີ ໘

[໔໖] ເມື່ອຣາຕີນັ້ນຜ່ານໄປແລ້ວ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ຄືນນີ້ ເມື່ອຣາຕີຜ່ານໄປ ໂຣຫິຕັດສະເທບພະບຸດມີວັນນະງາມຍິ່ງ ເຮັດພຣະເຊຕະວັນທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າມາຫາເຮົາເຖິງທີ່ຢູ່ ຢືນຢູ່ບ່ອນທີ່ສົມຄວນໄດ້ຖາມເຮົາດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງສາມາດທີ່ຈະຊົງຮູ້ ຊົງເຫັນ ຫຼື ຊົງເຖິງບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດດ້ວຍການໄປ ພິກຂຸທັງຫຼາຍ ເມື່ອເທບພະບຸດກ່າວແນວນີ້ ເຮົາຈຶ່ງໄດ້ກ່າວກັບເຂົາ ວ່າ

ເທບພະບຸດ ເຮົາບໍ່ກ່າວທີ່ສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ ພິກຂຸທັງຫຼາຍ ເມື່ອເຮົາກ່າວແນວນີ້ແລ້ວ ໂຣຫິຕັດສະເທບພະບຸດໄດ້ກ່າວກັບເຮົາດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຫຼາຍວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ຂ້າພຣະອົງເປັນລືສີຊື່ ໂຣຫິຕັດສະເປັນບຸດຂອງນາຍບ້ານ ມີລິດ ເຫາະໄດ້ ຄວາມໄວຂອງຂ້າພຣະອົງນັ້ນ ປຽບໄດ້ກັບນາຍຂະມັງທະນູຜູ້ຍິງທະນູແມ່ນຍໍາ ສຶກສາມາດີແລ້ວ ຜູ້ຊ່ຽວຊານ ເຝິກຊ້ອມມາດີ ຍິງລູກສອນເບົາໃຫ້ຜ່ານເງົາຕານດ້ານຂວາງໄປໄດ້ໂດຍບໍ່ຍາກ ການກ້າວຍ່າງແຕ່ລະບາດກ້າວຂອງຂ້າພຣະອົງ ປຽບໄດ້ກັບໄລຍະທາງຈາກທະເລດ້ານຕາເວັນອອກເຖິງທະເລດ້ານຕາເວັນຕົກແນວນັ້ນ ຄວາມປາຖະໜາແນວນີ້ວ່າ "ເຮົາຈັກເຖິງບ່ອນສຸດແຫ່ງໂລກດ້ວຍການໄປ" ເກີດແກ່ຂ້າພຣະອົງຜູ້ພຽບພ້ອມດ້ວຍຄວາມໄວ ແລະການກ້າວຍ່າງແນວນີ້ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນແລ ເວັ້ນຈາກການກິນ ການດື່ມ ການຫຍ້ຳ ການຊິມ ການຖ່າຍອຸດຈາຣະ ປັດສາວະ ການຫຼັບ ແລະການບັນເທົາຄວາມເມື່ອຍລ້າ ມີອາຍຸ ໑໐໐ ປີ ດໍາຣົງຊີບຢູ່ໄດ້ຕັ້ງ ໑໐໐ ປີ ດໍາເນີນໄປໄດ້ຕັ້ງ ໑໐໐ ປີ ຍັງບໍ່ເຖິງບ່ອນສຸດແຫ່ງໂລກກໍຕາຍສາກ່ອນໃນລະຫວ່າງທາງ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຫຼາຍວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ ພິກຂຸທັງຫຼາຍ ເມື່ອເຂົາກ່າວແນວນີ້ ເຮົາຈຶ່ງກ່າວກັບ ເທບພະບຸດນັ້ນດັ່ງນີ້ ວ່າ

ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ "ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້" ດ້ວຍການໄປ ແລະເຮົາບໍ່ກ່າວວ່າ ການທີ່ບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກຈະເຮັດບ່ອນສຸດແຫ່ງທຸກໄດ້

ອັນໜຶ່ງ ເຮົາບັນຍັດໂລກ ຄວາມເກີດແຫ່ງໂລກ ຄວາມດັບແຫ່ງໂລກ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງໂລກ ໃນຮ່າງກາຍທີ່ມີປະມານວາໜຶ່ງ ມີສັນຍາ ມີໃຈນີ້ເອງ"

ບໍ່ວ່າໃນເວລາໃດ ບ່ອນສຸດຂອງໂລກ
ໃຜກໍເຖິງບໍ່ໄດ້ດ້ວຍການໄປ
ແລະເມື່ອຍັງບໍ່ເຖິງບ່ອນສຸດຂອງໂລກ
ຍ່ອມບໍ່ມີການປົດເປື້ອງຕົນຈາກທຸກ
ຍ້ອນເຫດນັ້ນແລ ຜູ້ຮູ້ແຈ້ງໂລກ ມີປັນຍາດີ
ເຖິງບ່ອນສຸດຂອງໂລກ ຢູ່ຈົບພົມມະຈັນ
ສະງົບຣະງັບ ຮູ້ບ່ອນສຸດຂອງໂລກ

ຍ່ອມບໍ່ຫວັງທັງໂລກນີ້ແລະໂລກໜ້າ

**ທຸຕິຍະໂຣຫິຕັດສະສູດທີ ໖ ຈົບ**

## ໗. ສຸວິທູຣະສູດ

## ວ່າດ້ວຍສິ່ງທີ່ຢູ່ຫ່າງໄກກັນເຫຼືອເກີນ

[໔໗] ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນເຫຼືອເກີນ ໔ ຢ່າງນີ້

ສິ່ງທີ່ຢູ່ຫ່າງໄກກັນເຫຼືອເກີນ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໑
໒. ຝັ່ງນີ້ກັບຝັ່ງນັ້ນຂອງທະເລ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໒
໓. ຈຸດທີ່ດວງອາທິດຂຶ້ນກັບຈຸດທີ່ດວງອາທິດຕົກ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໓
໔. ທຳຂອງສັດຕະບຸຣຸດ (ຄົນດີ) ກັບທຳຂອງອະສັດຕະບຸຣຸດ (ຄົນຊົ່ວ) ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໔

ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນເຫຼືອເກີນ ໔ ຢ່າງນີ້ແລ

ນັກປາດທັງຫຼາຍກ່າວວ່າ
ຟ້າກັບດິນຢູ່ໄກກັນ
ຝັ່ງ (ທັງສອງ) ຂອງທະເລຢູ່ໄກກັນ
ຈຸດທີ່ດວງອາທິດຂຶ້ນ ແລະຕົກກໍຢູ່ໄກກັນ
ບັນດິດກ່າວວ່າ ທຳຂອງສັດຕະບຸຣຸດ
ກັບທຳຂອງອະສັດຕະບຸຣຸດຢູ່ໄກຍິ່ງກວ່ານັ້ນ
ສະມາຄົມຂອງສັດຕະບຸຣຸດຍັ່ງຍືນຍາວ
ດຳຣົງຢູ່ສົ້ງງກາລະນານ
ສ່ວນສະມາຄົມຂອງອະສັດຕະບຸຣຸດຍ່ອມຈືດຈາງໄວ
ເພາະສະນັ້ນ ທຳຂອງສັດຕະບຸຣຸດ
ຈຶ່ງຫ່າງໄກຈາກທຳຂອງອະສັດຕະບຸຣຸດ

**ສຸວິທູຣະສູດທີ ໗ ຈົບ**

# ໗. ວິສາຂະສູດ

## ວ່າດ້ວຍການສະແດງທຳຂອງວິສາຂະປັນຈາລິບຸດ

[໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ກໍສະໄໝນັ້ນແລ ທ່ານວິສາຂະປັນຈາລິບຸດຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນຫໍສັນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ຮ່ວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ດ້ວຍວາຈາຂອງຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມ ໝາຍໄດ້ ກ່ຽວເນື່ອງກັບນິບພານ ບໍ່ອີງອາໄສວັດຕະ ເມື່ອໃນເວລາເຢັນພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກເຂົ້າໄປຍັງຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມພິກຂຸທັງຫຼາຍ ວ່າ

“ພິກຂຸທັງຫຼາຍ ໃຜນໍ? ຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນຫໍສັນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮ່ວຍຮຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາ ດ້ວຍວາຈາຂອງຊາວເມືອງ ທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ກ່ຽວເນື່ອງກັບນິບພານ ບໍ່ອີງອາໄສວັດຕະ”

ພິກຂຸທັງຫຼາຍຂາບທູນວ່າ “ຂ້າແດ່ ພຣະອົງຜູ້ເລີສ ທ່ານວິສາຂະປັນຈາລິບຸດ ຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນຫໍສັນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮ່ວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ກ່ຽວເນື່ອງກັບນິບພານ ບໍ່ອີງອາໄສວັດຕະ”

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານວິສາຂະປັນຈາລິບຸດດັ່ງນີ້ວ່າ “ດີແທ້ດີຫຼາຍ ວິສາຂະ ດີເຫຼືອເກີນທີ່ທ່ານຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮ່ວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ກ່ຽວເນື່ອງກັບນິບພານບໍ່ອີງອາໄສ ວັດຕະ”

ບຸກຄົນຜູ້ບໍ່ເວົ້າ
ຊົນທັງຫຼາຍຍ່ອມບໍ່ຮູ້ວ່າເປັນຄົນພານຫຼືບັນດິດ
ສ່ວນບຸກຄົນຜູ້ທີ່ເວົ້າ
ຊົນທັງຫຼາຍຍ່ອມຮູ້ວ່າເປັນຜູ້ສະແດງອະມະຕະທຳ
ບຸກຄົນເພິ່ງປະກາດ ເຊີດຊູ

ຍົກຍ້ອງທຳເຊິ່ງເປັນທຸງໄຊຂອງລືສີ
ລືສີທັງຫຼາຍມີສຸພາສິດເປັນທຸງໄຊ
ທຳເປັນທຸງໄຊຂອງລືສີ

**ວິສາຂະສູດທີ ໗ ຈົບ**

## ໙. ວິປັນລາສະສູດ

## ວ່າດ້ວຍວິປະລາດ

[໔໙] ພິກຂຸທັງຫຼາຍ ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດ ໔ ປະການນີ້

ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດ ໔ ປະການ ອັນໃດແດ່ ຄື

໑. ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດໃນສິ່ງທີ່ບໍ່ທ່ຽງວ່າທ່ຽງ
໒. ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດໃນສິ່ງທີ່ເປັນທຸກວ່າເປັນສຸກ
໓. ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດໃນສິ່ງທີ່ເປັນອະນັດຕາວ່າເປັນອັດຕາ
໔. ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດໃນສິ່ງທີ່ບໍ່ງາມວ່າງາມ

ພິກຂຸທັງຫຼາຍ ສັນຍາວິປະລາດ ຈິດວິປະລາດ ທິດຖິວິປະລາດ ໔ ປະການນີ້ແລ

ພິກຂຸທັງຫຼາຍ ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດ ໔ ປະການນີ້

ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດ ໔ ປະການ ອັນໃດແດ່ ຄື

໑. ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດໃນສິ່ງທີ່ບໍ່ທ່ຽງວ່າ ບໍ່ທ່ຽງ
໒. ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດໃນສິ່ງທີ່ເປັນທຸກວ່າເປັນທຸກ
໓. ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດໃນສິ່ງທີ່ເປັນອະນັດຕາວ່າ ເປັນອະນັດຕາ
໔. ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດໃນສິ່ງທີ່ບໍ່ງາມວ່າບໍ່ງາມ

ພິກຂຸທັງຫຼາຍ ສັນຍາບໍ່ວິປະລາດ ຈິດບໍ່ວິປະລາດ ທິດຖິບໍ່ວິປະລາດ ໔ ປະການ ນີ້ແລ

ເຫຼົ່າສັດຜູ້ຖືກມິດສາທິດຖິທຳລາຍ

ມີຈິດຊັດສ່າຍ ສໍາຄັນຜິດ
ໝາຍຮູ້ໃນສິ່ງທີ່ບໍ່ທ່ຽງວ່າທ່ຽງ
ໝາຍຮູ້ໃນສິ່ງທີ່ເປັນທຸກວ່າເປັນສຸກ
ໝາຍຮູ້ໃນສິ່ງທີ່ເປັນອະນັດຕາວ່າເປັນອັດຕາ
ໝາຍຮູ້ໃນສິ່ງທີ່ບໍ່ງາມວ່າງາມ

ສັດເຫຼົ່ານັ້ນຊື່ວ່າຕິດຢູ່ໃນເຄື່ອງປະກອບຂອງມານ
ບໍ່ມີຄວາມກະເສມຈາກໂຍຄະ
ປະສົບກັບຄວາມເກີດແລະຄວາມຕາຍ
ທ່ອງທ່ຽວໄປສູ່ສັງສາຣະວັດ

ກໍໃນການໃດພຣະພຸດທະເຈົ້າ
ຜູ້ຈຸດປະກາຍໃຫ້ແສງສະຫວ່າງ ສະເດັດອຸບັດຂຶ້ນໃນໂລກ
ໃນການນັ້ນພຣະອົງຍ່ອມປະກາດທໍານີ້
ທີ່ໃຫ້ສັດເຖິງຄວາມດັບທຸກ

ສັດເຫຼົ່ານັ້ນຜູ້ມີປັນຍາ
ຟັງທໍາຂອງພຣະພຸດທະເຈົ້າເຫຼົ່ານັ້ນ
ກັບໄດ້ຄວາມຄິດເປັນຂອງຕົນເອງ
ໄດ້ເຫັນສິ່ງທີ່ບໍ່ທ່ຽງວ່າບໍ່ທ່ຽງ
ໄດ້ເຫັນສິ່ງທີ່ເປັນທຸກວ່າເປັນທຸກ
ໄດ້ເຫັນສິ່ງທີ່ເປັນອະນັດຕາວ່າເປັນອະນັດຕາ
ໄດ້ເຫັນສິ່ງທີ່ບໍ່ງາມວ່າເປັນຂອງບໍ່ງາມ
ຍຶດຖືສໍາມາທິດຖິ ພົ້ນທຸກທັງໝົດໄດ້

**ວິປັນລາສະສູດທີ ໗ ຈົບ**

## ໑໐. ອຸປັກກິເລສະສູດ

## ວ່າດ້ວຍສິ່ງມົວໝອງ

[໕໐] ພິກຂຸທັງຫຼາຍ ສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ ໔ ປະການນີ້

ສິ່ງມົວໝອງ ໔ ປະການ ອັນໃດແດ່ ຄື

໑. ກ້ອນເຟື້ອເປັນສິ່ງມົວໝອງ ທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະ ຫວ່າງ ບໍ່ຮຸ່ງເຮືອງ
໒. ໝອກເປັນສິ່ງມົວໝອງ ທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະ ຫວ່າງ ບໍ່ຮຸ່ງເຮືອງ
໓. ຄວັນແລະຝຸ່ນລະອອງເປັນສິ່ງມົວໝອງ ທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ
໔. ຣາຫູຜູ້ເປັນຈອມອະສູນເປັນສິ່ງມົວໝອງ ທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ

ພິກຂຸທັງຫຼາຍ ສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ ໔ ປະການນີ້ແລ

ເຊັ່ນດຽວກັນແລ ອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ໔ ປະການນີ້

ອຸປະກິເລດ ໔ ປະການ ອັນໃດແດ່ ຄື

໑. ສະມະນະພາມພວກໜຶ່ງດື່ມສຸຣາແລະເມໄຣ ບໍ່ເວັ້ນຂາດຈາກການດື່ມສຸຣາ ແລະເມໄຣ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງ ມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໑
໒. ສະມະນະພາມພວກໜຶ່ງເສບເມຖຸນທຳ ບໍ່ເວັ້ນຂາດຈາກການເສບເມຖຸນທຳ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໒
໓. ສະມະນະພາມພວກໜຶ່ງຍິນດີຄຳແລະເງິນ ບໍ່ເວັ້ນຂາດຈາກການຮັບຄຳ ແລະເງິນ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການ ທີ ໓
໔. ສະມະນະພາມພວກໜຶ່ງດຳເນີນຊີວິດດ້ວຍມິດສາຊີບ ບໍ່ເວັ້ນຂາດຈາກມິດສາຊີບ ນີ້ ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໔

ພິກຂຸທັງຫຼາຍ ອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ໔ ປະການນີ້ແລ

ສະມະນະພາມພວກໜຶ່ງ

ຖືກຣາຄະແລະໂທສະປົກຄຸມ
ຖືກອະວິດຊາຫຸ້ມຫໍ່ ຍິນດີຮູບທີ່ໜ້າຮັກ
ດື່ມສຸຣາແລະເມໄຣ ເສບເມຖຸນ
ເປັນຄົນມືດບອດ ຍິນດີຄຳແລະເງິນ
ສະມະນະພາມພວກໜຶ່ງ
ດຳເນີນຊີວິດດ້ວຍມິດສາຊີບ
ພຣະພຸດທະເຈົ້າຜູ້ເປັນເຜົ່າພັນພຣະອາທິດ
ຕັດອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງ
ມົວໝອງ ບໍ່ສະຫງ່າ ບໍ່ຜ່ອງໃສ
ເປັນທີ່ຮູ້ກັນວ່າບໍ່ບໍລິສຸດ
ມີທຸລີ ຖືກຄວາມມືດປົກຄຸມ
ເປັນທາດແຫ່ງຕັນຫາ ຖືກຕັນຫາຊັກນຳ
ໃຫ້ອັດຕະພາບທຍາບຈະເລີນເຕີບໂຕ
ຍ່ອມຍິນດີການເກີດໃໝ່

**ອຸປັກກິເລສະສູດທີ ໑໐ ຈົບ**

**ໂຣຫິຕັດສະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ສະມາທິພາວະນາສູດ
໒. ປະຖະມະໂກທະຄະຣຸສູດ
໓. ໂຣຫິຕັດສະສູດ
໗. ສຸວິທູຣະສູດ
໙. ວິປັນລາສະສູດ
໔. ປັນຫະພະຍາກະຣະນະສູດ
໔. ທຸຕິຍະໂກທະຄະຣຸສູດ
໖. ທຸຕິຍະໂຣຫິຕັດສະສູດ
໘. ວິສາຂະສູດ
໑໐. ອຸປັກກິເລສະສູດ


**ປະຖົມປັນນາດ ຈົບ**

# ໔. ທຸຕິຍະປັນນາດ

## ໑. ປຸນຍາພິສັນທະວັກ

### ໝວດວ່າດ້ວຍຫ້ວງບຸນກຸສົນ

## ໑. ປະຖົມປຸນຍາພິສັນທະສູດ

### ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໑

[໕໑] (ເຫດເກີດທີ່ເມືອງສາວັດຖີ) ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ ນຳສຸກມາໃຫ້ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່ ຄື

໑. ພິກຂຸໃຊ້ສອຍຈີວອນຂອງທາຍົກໃດ ບັນລຸເຈໂຕສະມາທີທີ່ປະມານບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນ ປະມານບໍ່ໄດ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ
໒. ພິກຂຸສັນບິນທະບາດຂອງທາຍົກໃດ ຯລຯ
໓. ພິກຂຸໃຊ້ສອຍເສນາສະນະຂອງທາຍົກໃດ ຯລຯ
໔. ພິກຂຸບໍລິໂພກຄິລານະປັດໄຈເພສັດບໍລິຂານຂອງທາຍົກໃດ ບັນລຸເຈໂຕສະມາທີທີ່ປະມານບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນປະມານບໍ່ໄດ້ ນຳສຸກມາໃຫ້ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ແລ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ການທີ່ຈະກຳນົດປະມານບຸນຂອງອະຣິຍະສາວົກ ຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ "ຫ້ວງບຸນກຸສົນມີປະມານເທົ່ານີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ

ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ” ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ “ເປັນກອງບຸນໃຫຍ່ ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ”

ການກຳນົດປະມານຂອງນ້ຳໃນມະຫາສະມຸດວ່າ “ນ້ຳມີປະລິມານທໍ່ນີ້ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑໐໐ ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑,໐໐໐ ອາລະຫະກະ ຫຼື ນ້ຳມີປະລິມານທໍ່ນີ້ ໑໐໐,໐໐໐ ອາລະຫະກະ” ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ປະມານຂອງນ້ຳໃນມະຫາສະມຸດນັ້ນ ຍ່ອມເຖິງການນັບວ່າ “ເປັນຫ້ວງນ້ຳໃຫຍ່ ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ” ແມ່ນສັນໃດ

ການທີ່ຈະກຳນົດປະມານບຸນຂອງອະຣິຍະສາວົກ ຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການ ນີ້ວ່າ “ຫ້ວງບຸນກຸສົນມີປະມານທໍ່ນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນໃຫ້ເກີດໃນ ສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ” ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ “ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ” ສັນນັ້ນຄືກັນແລ

ແມ່ນ້ຳຫຼາຍສາຍອັ່ງອໍໄປດ້ວຍໝູ່ປາ
ໄຫຼບ່າໄປຍັງມະຫາສະມຸດອັນເປັນທີ່ຂັງນ້ຳຂະໜາດໃຫຍ່
ປະມານບໍ່ໄດ້ ມີສິ່ງທີ່ເປັນຕາຢ້ານຫຼາຍ
ເປັນແຫຼ່ງຣັດຕະນະຊັ້ນຢ້ຽມສັນໃດ
ສາຍທານແຫ່ງບຸນຍ່ອມຫຼັ່ງໄຫຼໄປສູ່ນໍຣະຊົນຜູ້ເປັນບັນດິດ
ຜູ້ໃຫ້ເຂົ້າ ນ້ຳ ຜ້າ ບ່ອນນອນ ບ່ອນນັ່ງ ແລະເຄື່ອງປູລາດ
ປຽບຄືແມ່ນ້ຳຄືຫ້ວງນ້ຳໄຫຼໄປຍັງມະຫາສະມຸດສັນນັ້ນ

**ປະຖົມປຸນຍາພິສັນທະສູດທີ ໑ ຈົບ**

## ໘. ທຸຕິຍະປຸນຍາພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໘

[໕໘] ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ຢ່າງນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີຝຶກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ປະການທີ ໑ ນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໒. ອະຣິຍະສາວົກປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ປະການທີ ໒ ນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໓. ອະຣິຍະສາວົກປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ" ພິກຂຸທັງຫຼາຍ ຫ້ວງບຸນກຸສົນປະການທີ ໓ ນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໔. ອະຣິຍະສາວົກປະກອບດ້ວຍສີນ ທີ່ພຣະອະຣິຍະພໍໃຈ ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ດ່າງ ບໍ່ດ່າງ ບໍ່ຕົກ ເປັນທາດ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ພິກຂຸທັງຫຼາຍ ຫ້ວງບຸນກຸສົນປະການທີ ໔ ນີ້ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ແລ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຜູ້ໃດມີສັດທາໃນຕະຖາຄົດຕັ້ງໝັ້ນບໍ່ຫວັ່ນໄຫວ
ມີສີນງາມ ເປັນສີນທີ່ພຣະອະຣິຍະພໍໃຈ (ແລະ) ສັນເສີນ

ມີຄວາມເຫຼື້ອມໃສໃນພຣະສົງ ແລະມີຄວາມເຫັນກົງ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ ເປັນຄົນບໍ່ຂັດສົນ
ຊີວິດຂອງເຂົາກໍບໍ່ສູນເປົ່າ
ເພາະສະນັ້ນ ຜູ້ມີປັນຍາເມື່ອຣະນຶກເຖິງ
ຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ຄວນໝັ່ນປະກອບ
ສັດທາ ສິນ ຄວາມເຫຼື້ອມໃສແລະການເຫັນທຳ

**ທຸຕິຍະປຸນຍາພິສັນທະສູດທີ ໘ ຈົບ**

## ໓. ປະຖະມະສັງວາສະສູດ

## ວ່າດ້ວຍການຢູ່ຮ່ວມກັນ ສູດທີ ໑

[໕໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດທາງໄກ ລະຫວ່າງເມືອງມະທຸຣາກັບເມືອງເວຣັນຊາ ຄະຫະບໍດີ ແລະຄະຫະປະຕານີຫຼວງຫຼາຍ ກໍໄດ້ເດີນທາງໄກລະຫວ່າງເມືອງມະທຸຣາ ກັບເມືອງເວຣັນຊາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລົງຂ້າງທາງ ປະທັບນັ່ງທີ່ເຫງົ້າໄມ້ຕົ້ນໜຶ່ງ ຄະຫະບໍດີ ແລະຄະຫະປະຕານີເຫຼົ່ານັ້ນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ເຫງົ້າຕົ້ນໄມ້ ຕົ້ນໜຶ່ງ ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຄະຫະບໍດີ ແລະຄະຫະປະຕານີເຫຼົ່ານັ້ນດັ່ງນີ້ ວ່າ

ຄະຫະບໍດີ ແລະຄະຫະປະຕານີ ການຢູ່ຮ່ວມກັນ ໔ ປະການນີ້

ການຢູ່ຮ່ວມກັນ ໔ ປະການ ອັນໃດແດ່ ຄື

໑. ສາມີຜີຢູ່ຮ່ວມກັບພັນລະຍາຜີ
໒. ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ
໓. ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ
໔. ສາມີເທວະດາຢູ່ຮ່ວມກັບພັນລະຍາເທວະດາ

ສາມີຜີຢູ່ຮ່ວມກັບພັນລະຍາຜີ ເປັນແນວໃດ?

ຄື ສາມີໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເສບຂອງມຶນເມົາຄືສຸຣາ ແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ທຸສິນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າ ແລະຕິຕຽນສະມະນະພາມ ຢູ່ຄອງເຮືອນ ແມ່ນພັນລະຍາ

ຂອງເຂົາກໍເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເສບຂອງມຶນເມົາ ຄື ສຸຣາ ແລະ ເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ທຸສິນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນ ມົນທິນຄອບງຳ ດ່າແລະຕິຕຽນສະມະນະພາມ ຢູ່ຄອງເຮືອນ ສາມີຜີຢູ່ຮ່ວມກັບພັນລະຍາຜີ ເປັນ ແບບນີ້ແລ

ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ ເປັນແບບໃດ?

ຄື ສາມີໃນໂລກນີ້ເປັນຜູ້ຂ້າສັດ ຯລຯ ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນ ເຫດແຫ່ງຄວາມຜະໝາດ ເປັນຜູ້ທຸສິນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າແລະຕິຕຽນສະມະນະພາມ ຢູ່ຄອງເຮືອນ ສ່ວນພັນລະຍາຂອງເຂົາ ເປັນຜູ້ເວັ້ນຂາດຈາກການ ຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການ ເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝ າດ ເປັນຜູ້ມີສິນ ມີກັນລະຍານະທຳ ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າ ແລະບໍ່ຕິ ຕຽນສະມະນະພາມ ຢູ່ຄອງເຮືອນ ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ ເປັນແບບນີ້ແລ

ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ ເປັນແບບໃດ?

ຄື ສາມີໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດ ຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສິນ ມີກັນລະຍານະທຳ ມີໃຈ ປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າ ແລະບໍ່ຕິຕຽນສະມະນະພາມ ຢູ່ຄອງເຮືອນ ສ່ວນພັນ ລະຍາຂອງເຂົາເປັນຜູ້ຂ້າສັດ ຯລຯ ເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມ ຜະໝາດ ເປັນຜູ້ທຸສິນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າ ແລະຕິຕຽນ ສະມະນະພາມ ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ ເປັນແບບນີ້ແລ

ສາມີເທວະດາຢູ່ຮ່ວມກັບພັນລະຍາເທວະດາ ເປັນແບບໃດ?

ຄື ສາມີໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງ ມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສິນ ມີກັນລະຍານະທຳ ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າ ແລະບໍ່ຕິຕຽນສະມະນະພາມ ແມ່ນພັນລະຍາ ຂອງເຂົາກໍເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສິນ ມີກັນລະຍານະທຳ ມີໃຈປາສະຈາກ ຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າ ແລະບໍ່ຕິຕຽນສະມະນະພາມ ສາມີເທວະດາ ຢູ່ຮ່ວມກັບພັນລະ ຍາເທວະດາ ເປັນແບບນີ້ແລ

ຄະຫະບໍດີ ແລະຄະຫະປະຕານີ ການຢູ່ຮ່ວມກັນ ໔ ຢ່າງນີ້ແລ

ສາມີແລະພັນລະຍາທັງ ໒ ຝ່າຍເປັນຜູ້ທຸສີນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ຊື່ວ່າເປັນຜີມາຢູ່ຮ່ວມກັນ
ສາມີເປັນຜູ້ທຸສີນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ສ່ວນພັນລະຍາເປັນຜູ້ມີສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ພັນລະຍານັ້ນຊື່ວ່າເປັນເທວະດາຢູ່ຮ່ວມກັບສາມີຜີ
ສາມີເປັນຜູ້ມີສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ສ່ວນພັນລະຍາເປັນຜູ້ທຸສີນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ພັນລະຍານັ້ນຊື່ວ່າເປັນຜີຢູ່ຮ່ວມກັບສາມີເທວະດາ
ສ່ວນສາມີແລະພັນລະຍາທັງ ໒ ຝ່າຍ
ເປັນຜູ້ມີສັດທາ ຮູ້ຄວາມປະສົງຂອງຜູ້ຂໍ
ສັງລວມຣະວັງ ດຳເນີນຊີວິດໂດຍທຳ
ເຈຣະຈາຄຳມ່ວນອ່ອນຫວານຕໍ່ກັນ
ມີຄວາມຈະເລີນຮຸ່ງເຮືອງ ມີຄວາມຜາສຸກ
ມີຄວາມປະພຶດສະເໝີກັນທັງ ໒ ຝ່າຍ
ຮັກແພງ ບໍ່ຄິດຮ້າຍຕໍ່ກັນ
ທັງ ໒ ຝ່າຍປະພຶດທຳໃນໂລກນີ້
ມີສີນແລະຂໍ້ວັດສະເໝີກັນ ສະເຫວີຍອາລົມທີ່ໜ້າຕ້ອງການ
ຍ່ອມເພີດເພີນບັນເທີງໃຈໃນເທວະໂລກ

## ໔. ທຸຕິຍະສັງວາສະສູດ

## ວ່າດ້ວຍການຢູ່ຮ່ວມກັນ ສູດທີ ໒

[໕໔] ພິກຂຸທັງຫຼາຍ ການຢູ່ຮ່ວມກັນ ໔ ປະການນີ້

ການຢູ່ຮ່ວມກັນ ໔ ປະການ ອັນໃດແດ່ ຄື

໑. ສາມີຜີຢູ່ຮ່ວມກັບພັນລະຍາຜີ
໒. ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ
໓. ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ
໔. ສາມີເທວະດາຢູ່ຮ່ວມກັບພັນລະຍາເທວະດາ

ສາມີຜີຢູ່ຮ່ວມກັບພັນລະຍາຜີ ເປັນແນວໃດ?

ຄື ສາມີໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິຈສາທິດຖິ ເປັນຜູ້ທຸສີນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າແລະຕິຕຽນສະມະນະພາມ ຢູ່ຄອງເຮືອນ ແມ່ນພັນລະຍາຂອງເຂົາກໍເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິຈສາທິດຖິ ເປັນຜູ້ທຸສີນ ມີທຳຊົ່ວຊາມ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າແລະຕິຕຽນສະມະນະພາມ ຢູ່ຄອງເຮືອນ ສາມີຜີຢູ່ຮ່ວມກັບພັນລະຍາຜີ ເປັນແນວນີ້ແລ

ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ ເປັນແນວໃດ?

ຄື ສາມີໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ຯລຯ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າແລະຕິຕຽນສະມະນະພາມຢູ່ຄອງເຮືອນ ສ່ວນພັນລະຍາຂອງເຂົາ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການ ເວົ້າຄຳຫຍາບ ເວັ້ນຂາດຈາກເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ເປັນຜູ້ມີສີນ ມີກັນລະຍານະທຳມີໃຈປາສະຈາກ ຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າແລະບໍ່ຕິຕຽນສະມະນະພາມ ຢູ່ຄອງເຮືອນ ສາມີຜີຢູ່ຮ່ວມກັບພັນລະຍາເທວະດາ ເປັນແນວນີ້ແລ

ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ ເປັນແນວໃດ?

ຄື ສາມີໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ເປັນຜູ້ມີສີນ ມີກັນລະຍານະທຳ ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າແລະບໍ່ຕິຕຽນສະມະນະພາມ ຢູ່ຄອງເຮືອນ ສ່ວນພັນລະຍາຂອງເຂົາ ເປັນຜູ້ຂ້າສັດ ຯລຯ ມີໃຈຖືກຄວາມຂີ້ຖີ່ອັນເປັນມົນທິນຄອບງຳ ດ່າແລະຕິຕຽນ ສະມະນະພາມ ຢູ່ຄອງເຮືອນ ສາມີເທວະດາຢູ່ຮ່ວມກັບພັນລະຍາຜີ ເປັນແນວນີ້ແລ

ສາມີເທວະດາຢູ່ຮ່ວມກັບພັນລະຍາເທວະດາ ເປັນແນວໃດ?

ຄື ສາມີໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດໆລໆ ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ບໍ່ດ່າ ແລະບໍ່ຕິຕຽນສະມະນະພາມ ຢູ່ຄອງເຮືອນ ແມ່ນພັນລະຍາ ຂອງເຂົາກໍເປັນຜູ້ເວັ້ນຂາດຈາກການຂ້າສັດ ໆລໆ ບໍ່ດ່າ ແລະບໍ່ຕິຕຽນສະມະນະພາມ ສາມີເທວະດາຢູ່ຮ່ວມກັບພັນລະຍາເທວະດາ ເປັນແນວນີ້ແລ

ພິກຂຸທັງຫຼາຍ ການຢູ່ຮ່ວມກັນ ໔ ປະການນີ້ແລ
ສາມີ ແລະພັນລະຍາທັງ ໒ ຝ່າຍເປັນຜູ້ທຸສິນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ຊື່ວ່າເປັນຜີມາຢູ່ຮ່ວມກັນ
ສາມີເປັນຜູ້ທຸສິນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ສ່ວນພັນລະຍາເປັນຜູ້ມີສິນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ພັນລະຍານັ້ນຊື່ວ່າເປັນເທວະດາຢູ່ຮ່ວມກັບສາມີຜີ
ສາມີເປັນຜູ້ມີສິນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ສ່ວນພັນລະຍາເປັນຜູ້ທຸສິນ
ຂີ້ຖີ່ ມັກດ່າວ່າສະມະນະພາມ
ພັນລະຍານັ້ນຊື່ວ່າເປັນຜີຢູ່ຮ່ວມກັບຜົວເທວະດາ
ສາມີແລະພັນລະຍາທັງ ໒ ຝ່າຍ
ເປັນຜູ້ມີສັດທາ ຮູ້ຄວາມປະສົງຂອງຜູ້ຂໍ
ສັງລວມຣະວັງ ດຳເນີນຊີວິດໂດຍທຳ
ເຈຣະຈາຄຳໄພເລາະອ່ອນຫວານຕໍ່ກັນ
ມີຄວາມຈະເລີນຮຸ່ງເຮືອງ ມີຄວາມຜາສຸກ
ມີຄວາມປະພຶດສະເໝີກັນທັງ ໒ ຝ່າຍ
ຮັກແພງ ບໍ່ຄິດຮ້າຍຕໍ່ກັນ
ທັງ ໒ ຝ່າຍປະພຶດທຳໃນໂລກນີ້
ມີສິນແລະຂໍ້ວັດສະເໝີກັນ ສະເຫວີຍອາລົມທີ່ໜ້າຕ້ອງການ
ຍ່ອມເພີດເພີນບັນເທີງໃຈໃນເທວະໂລກ

**ທຸຕິຍະສັງວາສະສູດທີ ໔ ຈົບ**

# ໕. ປະຖະມະສະມະຊີວີສູດ

## ວ່າດ້ວຍຜູ້ມີທຳເປັນເຄື່ອງຢູ່ສະເໝີກັນ ສູດທີ ໑

[໕໕] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ເພສະກະລາມະຣິຄະທາຍະວັນ ເຂດເມືອງສຸງສຸມານຄີຣະ ແຄວ້ນພັກຄະ ເມື່ອໃນເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປຍັງນິເວດຂອງນະກຸລະປິຕາຄະຫະບໍດີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ລຳດັບນັ້ນ ນະກຸລະປິຕາຄະຫະບໍດີ ແລະນະກຸລະມາຕາຄະຫະປະຕານີພາກັນເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ນັບແຕ່ເວລາທີ່ຂ້າພຣະອົງນຳນະກຸລະມາຕາ ຄະຫະປະຕານີມາ ຂ້າພຣະອົງບໍ່ເຄີຍຄິດທີ່ຈະປະພຶດນອກໃຈນະກຸລະມາຕາ ຄະຫະປະຕານີ ດ້ວຍໃຈ ບໍ່ຕ້ອງເວົ້າຮອດຈະປະພຶດນອກໃຈດ້ວຍກາຍ ພວກຂ້າພຣະອົງປາຖະໜາທີ່ຈະພົບກັນທັງໃນຊາດນີ້ແລະຊາດໜ້າ"

ແມ່ນນະກຸລະມາຕາຄະຫະປະຕານີ ກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ນັບແຕ່ເວລາທີ່ນະກຸລະປິຕາຄະຫະບໍດີໜຸ່ມນຳຂ້ານ້ອຍຜູ້ຍັງເປັນສາວມາຂ້ານ້ອຍບໍ່ເຄີຍຄິດທີ່ຈະປະພຶດນອກໃຈນະກຸລະປິຕາຄະຫະບໍດີ ແມ່ນວ່າດ້ວຍໃຈ ບໍ່ຕ້ອງເວົ້າຮອດຈະປະພຶດນອກໃຈດ້ວຍກາຍ ພວກຂ້າພຣະອົງປາຖະໜາທີ່ຈະພົບກັນທັງໃນຊາດນີ້ ແລະຊາດໜ້າ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ແລະຄະຫະປະຕານີ ຖ້າສາມີ ແລະພັນລະຍາທັງ ໔ ຝ່າຍ ຫວັງຈະພົບກັນທັງໃນຊາດນີ້ ແລະຊາດໜ້າ ທັງ ໔ ຝ່າຍເພິ່ງມີສັດທາສະເໝີກັນ ມີສີນສະເໝີກັນ ມີຈາຄະສະເໝີກັນ ມີປັນຍາສະເໝີກັນ ສາມີ ແລະພັນລະຍາທັງ ໔ ຝ່າຍນັ້ນຍ່ອມໄດ້ພົບກັນທັງໃນຊາດນີ້ ແລະຊາດໜ້າ"

ສາມີແລະພັນລະຍາທັງ ໔ ຝ່າຍ
ເປັນຜູ້ມີສັດທາ ຮູ້ຄວາມປະສົງຂອງຜູ້ຂໍ
ສັງລວມຣະວັງ ດຳເນີນຊີວິດໂດຍທຳ
ເຈຣະຈາຄຳມ່ວນອ່ອນຫວານຕໍ່ກັນ
ມີຄວາມຈະເລີນຮຸ່ງເຮືອງ ມີຄວາມຜາສຸກ
ມີຄວາມປະພຶດສະເໝີກັນທັງ ໔ ຝ່າຍ

ຮັກແພງ ບໍ່ຄິດຮ້າຍຕໍ່ກັນ
ທັງ ໒ ຝ່າຍ ປະພຶດທຳໃນໂລກນີ້
ມີສິນແລະຂໍ້ວັດສະເໝີກັນ ສະເຫວີຍອາລົມທີ່ໜ້າຕ້ອງການ
ຍ່ອມເພີດເພີນບັນເທີງໃຈໃນເທວະໂລກ

**ປະຖະມະສະມະຊີວີສູດ ຈົບ**

## ๖. ທຸຕິຍະສະມະຊີວີສູດ

### ວ່າດ້ວຍຜູ້ມີທຳເປັນເຄື່ອງຢູ່ສະເໝີກັນ ສູດທີ ໒

[໕๖] ພິກຂຸທັງຫຼາຍ ຖ້າສາມີ ແລະພັນລະຍາທັງ ໒ ຝ່າຍຫວັງທີ່ຈະພົບກັນທັງໃນຊາດນີ້ ແລະຊາດໜ້າ ທັງ ໒ ຝ່າຍເພິ່ງມີສັດທາສະເໝີກັນ ມີສິນສະເໝີກັນ ມີຈາຄະສະເໝີກັນ ມີປັນຍາສະ ເໝີກັນ ສາມີແລະພັນລະຍາທັງ ໒ ຝ່າຍນັ້ນຍ່ອມໄດ້ພົບກັນທັງໃນຊາດນີ້ແລະຊາດໜ້າ

ສາມີແລະພັນລະຍາທັງ ໒ ຝ່າຍ
ເປັນຜູ້ມີສັດທາ ຮູ້ຄວາມປະສົງຂອງຜູ້ຂໍ
ສັງລວມຣະວັງ ດຳເນີນຊີວິດໂດຍທຳ
ເຈຣະຈາຄຳມ່ວນອ່ອນຫວານຕໍ່ກັນ
ມີຄວາມຈະເລີນຮຸ່ງເຮືອງ ມີຄວາມຜາສຸກ
ມີຄວາມປະພຶດສະເໝີກັນທັງ ໒ ຝ່າຍ
ຮັກແພງ ບໍ່ຄິດຮ້າຍຕໍ່ກັນ
ທັງ ໒ ຝ່າຍປະພຶດທຳໃນໂລກນີ້
ມີສິນແລະຂໍ້ວັດສະເໝີກັນ ສະເຫວີຍອາລົມທີ່ໜ້າຕ້ອງການ
ຍ່ອມເພີດເພີນບັນເທີງໃຈໃນເທວະໂລກ

**ທຸຕິຍະສະມະຊີວີສູດທີ ๖ ຈົບ**

## ໗. ສຸບປະວາສາສູດ

### ວ່າດ້ວຍສຸບປະວາສາໂກລິຍະທິດາ

[໕໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນິຄົມຂອງໂກລິຍະຣາດຊະສະກຸນ ຊື່ປັດຊະເນລະ ແຄວ້ນໂກລິຍະ ເມື່ອໃນເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາ

ສົກ ຖືບາດແລະຈີວອນ ສະເດັດເຂົ້າໄປຍັງນິເວດຂອງສຸບປະວາສາໂກລິຍະທິດາ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ລໍາດັບນັ້ນ ສຸບປະວາສາໂກລິຍະທິດາໄດ້ນໍາຂອງຂົບສັນອັນປະນີດປະເຄນພຣະຜູ້ມີພຣະພາກເຈົ້າໃຫ້ອີ່ມໜໍາດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສໍາເລັດ ຊົງວາງພຣະຫັດອອກຈາກບາດແລ້ວ ສຸບປະວາສາໂກລິຍະທິດາ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດກັບສຸບປະວາສາໂກລິຍະທິດາດັ່ງນີ້ ວ່າ

ສຸບປະວາສາ ອະຣິຍະສາວິກາຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ໔ ປະການແກ່ປະຕິຄາຫົກ

ຖານະ ໔ ປະການ ອັນໃດແດ່ ຄື

໑. ອາຍຸ
໒. ສຸຂະ
໓. ວັນນະ
໔. ພະລະ

ເມື່ອໃຫ້ອາຍຸແລ້ວ ຍ່ອມມີສ່ວນໄດ້ອາຍຸອັນເປັນທິບ ຫຼື ອັນເປັນຂອງມະນຸດ ເມື່ອໃຫ້ວັນນະແລ້ວຍ່ອມມີສ່ວນໄດ້ວັນນະອັນເປັນທິບ ຫຼື ອັນເປັນຂອງມະນຸດ ເມື່ອໃຫ້ສຸກ ແລ້ວຍ່ອມມີສ່ວນໄດ້ສຸກອັນເປັນທິບ ຫຼື ອັນເປັນຂອງມະນຸດ ເມື່ອໃຫ້ພະລະແລ້ວ ຍ່ອມມີສ່ວນໄດ້ພະລະອັນເປັນທິບຫຼືອັນເປັນຂອງມະນຸດ

ສຸບປະວາສາ ອະຣິຍະສາວິກາຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ໔ ປະການນີ້ແກ່ປະຕິຄາຫົກ

ທັກຂິນາຄືໂພຊະນະທີ່ອະຣິຍະສາວິກາໃຫ້
ເຊິ່ງປຸງຢ່າງດີ ສະອາດ ປະນີດ ສົມບູນດ້ວຍຣົດ
ຊື່ວ່າໃຫ້ໃນທ່ານຜູ້ປະຕິບັດກົງ
ປະກອບພ້ອມດ້ວຍກິຣິຍາມາຣະຍາດ ເຖິງຄວາມເປັນໃຫຍ່
ທັກຂິນານັ້ນເຊື່ອມຕໍ່ບຸນກັບບຸນ
ເປັນທັກຂິນາມີຜົນຫຼາຍ
ທີ່ພຣະພຸດທະເຈົ້າຜູ້ຮູ້ແຈ້ງໂລກຊົງສັນເສີນ
ຊົນຜູ້ຣະນຶກເຖິງຍັນເຊັ່ນນັ້ນ
ເກີດຄວາມຍິນດີ ທ່ຽວໄປໃນໂລກ
ກໍາຈັດມົນທິນຄືຄວາມຂີ້ຖີ່ພ້ອມທັງຣາກເຫງົ້າ
ບໍ່ຖືກໃຜນິນທາ ຍ່ອມເຂົ້າເຖິງຖານະຄືສະຫວັນ

**ສຸບປະວາສາສູດທີ ໗ ຈົບ**

# ໗. ສຸທັດຕະສູດ

## ວ່າດ້ວຍສຸທັດຕະຄະຫະບໍດີ

[໕໗] ຄັ້ງນັ້ນແລ ອະນາຖະບິນທິກະຄະຫະບໍດີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບ ອະນາຖະບິນທິກະຄະຫະບໍດີ ດັ່ງນີ້ວ່າ

ຄະຫະບໍດີ ອະຣິຍະສາວົກຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ໔ ປະການແກ່ປະຕິຄາຫົກ

ຖານະ ໔ ປະການ ອັນໃດແດ່ ຄື

໑. ອາຍຸ　　໒. ວັນນະ
໓. ສຸຂະ　　໔. ພະລະ

ເມື່ອໃຫ້ອາຍຸແລ້ວ ຍ່ອມມີສ່ວນໄດ້ອາຍຸອັນເປັນທິບ ຫຼືອັນເປັນຂອງມະນຸດ ເມື່ອໃຫ້ວັນນະແລ້ວ ຯລຯ ເມື່ອໃຫ້ສຸຂະແລ້ວ ຯລຯ ເມື່ອໃຫ້ພະລະແລ້ວ ຍ່ອມມີສ່ວນໄດ້ພະລະອັນເປັນທິບຫຼືອັນເປັນຂອງມະນຸດ

ຄະຫະບໍດີ ອະຣິຍະສາວົກ ຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ໔ ປະການນີ້ແກ່ປະຕິຄາຫົກ

ຜູ້ໃຫ້ໂພຊະນະໂດຍເຄົາລົບຕາມເວລາອັນຄວນ
ແກ່ທ່ານຜູ້ສັງລວມ ບໍຣິໂພກໂພຊະນະທີ່ຜູ້ອື່ນໃຫ້
ຊື່ວ່າເພິ່ນໃຫ້ຖານະ ໔ ປະການ ຄື
ອາຍຸ ວັນນະ ສຸຂະ ແລະພະລະ
ນໍຣະຊົນຜູ້ໃຫ້ອາຍຸ ວັນນະ ສຸຂະ ພະລະ
ຍ່ອມເປັນຜູ້ມີອາຍຸຍືນ ມີຍົດໃນບ່ອນທີ່ຕົນເກີດ

**ສຸທັດຕະສູດທີ ໗ ຈົບ**

# ໘. ໂພຊະນະສູດ

## ວ່າດ້ວຍທາຍົກຜູ້ໃຫ້ໂພຊະນະ

[໕໘] ພິກຂຸທັງຫຼາຍ ທາຍົກຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ໔ ປະການແກ່ປະຕິຄາຫົກ

ຖານະ ๔ ປະການ ອັນໃດແດ່ ຄື

| | |
|---|---|
| ๑. ອາຍຸ | ๒. ວັນນະ |
| ๓. ສຸຂະ | ๔. ພະລະ |

ເມື່ອໃຫ້ອາຍຸແລ້ວ ຍ່ອມມີສ່ວນໄດ້ອາຍຸອັນເປັນທິບ ຫຼື ອັນເປັນຂອງມະນຸດ ເມື່ອໃຫ້ວັນນະແລ້ວ ฯລฯ ເມື່ອໃຫ້ສຸກແລ້ວ ฯລฯ ເມື່ອໃຫ້ພະລະແລ້ວ ຍ່ອມມີສ່ວນໄດ້ພະລະອັນເປັນທິບ ຫຼື ອັນເປັນຂອງມະນຸດ

ພິກຂຸທັງຫຼາຍ ທາຍົກຜູ້ໃຫ້ໂພຊະນະຊື່ວ່າໃຫ້ຖານະ ๔ ປະການແກ່ປະຕິຄາຫົກ

ຜູ້ໃຫ້ໂພຊະນະໂດຍເຄົາລົບຕາມເວລາອັນຄວນ
ແກ່ທ່ານຜູ້ສັງລວມ ບໍຣິໂພກໂພຊະນະທີ່ຜູ້ອື່ນໃຫ້
ຊື່ວ່າເພິ່ນໃຫ້ຖານະ ๔ ປະການ ຄື
ອາຍຸ ວັນນະ ສຸຂະ ແລະພະລະ
ນໍຣະຊົນຜູ້ໃຫ້ອາຍຸ ວັນນະ ສຸຂະ ພະລະ
ຍ່ອມເປັນຜູ້ມີອາຍຸຍືນ ມີຍົດໃນບ່ອນທີ່ຕົນເກີດ

**ໂພຊະນະສູດທີ ๙ ຈົບ**

## ๑๐. ຄິຫິສາມີຈິສູດ

## ວ່າດ້ວຍການປະຕິບັດປະຕິປະທາທີ່ເໝາະສົມແກ່ຄະລືຫັດ

[๖๐] ຄັ້ງນັ້ນແລ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນທິກະຄະຫະບໍດີດັ່ງນີ້ວ່າ

ຄະຫະບໍດີ ອະຣິຍະສາວົກຜູ້ປະກອບດ້ວຍທຳ ๔ ປະການ ຊື່ວ່າປະຕິບັດປະຕິປະທາທີ່ເໝາະສົມແກ່ຄະລືຫັດ ທີ່ເປັນເຫດໃຫ້ໄດ້ຍົດ ເປັນໄປເພື່ອໃຫ້ເກີດໃນສະຫວັນ

ທຳ ๔ ປະການ ອັນໃດແດ່ ຄື

ອະຣິຍະສາວົກໃນທຳວິໄນນີ້

໑. ບຳຣຸງພິກຂຸສົງດ້ວຍຈີວອນ
໒. ບຳຣຸງພິກຂຸສົງດ້ວຍບິນທະບາດ
໓. ບຳຣຸງພິກຂຸສົງດ້ວຍເສນາສະນະ
໔. ບຳຣຸງພິກຂຸສົງດ້ວຍຄິລານະປັດໄຈເພສັດບໍຣິຂານ

ຄະຫະບໍດີ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ຊື່ວ່າປະຕິບັດປະຕິປະທາທີ່ເໝາະສົມ ແກ່ຄະລິຫັດ ທີ່ເປັນເຫດໃຫ້ໄດ້ຍົດ ເປັນໄປເພື່ອໃຫ້ເກີດໃນສະຫວັນ

ບັນດິດທັງຫຼາຍບຳຣຸງທ່ານຜູ້ມີສີນ ຜູ້ປະຕິບັດຖືກ
ດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຢາປົວພະຍາດ
ຊື່ວ່າປະຕິບັດປະຕິປະທາທີ່ເໝາະສົມແກ່ຄະລິຫັດ
ບຸນຍ່ອມຈະເລີນຍິ່ງແກ່ບັນດິດເຫຼົ່ານັ້ນ
ທຸກເມື່ອທັງກາງເວັນແລະກາງຄືນ
ເຂົາເມື່ອເຮັດກຳດີງາມແລ້ວ
ຍ່ອມເຂົ້າເຖິງຖານະຄືສະຫວັນ

**ຄິຫິສາມີຈິສູດທີ ໑໐ ຈົບ**

**ປຸນຍາພິສັນທະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖະມະປຸນຍາພິສັນທະສູດ
໒. ທຸຕິຍະປຸນຍາພິສັນທະສູດ
໓. ປະຖະມະສັງວາສະສູດ
໔. ທຸຕິຍະສັງວາສະສູດ
໕. ປະຖະມະສະມະຊີວີສູດ
໖. ທຸຕິຍະສະມະຊີວີສູດ
໗. ສຸບປະວາສາສູດ
໘. ສຸທັດຕະສູດ
໙. ໂພຊະນະສູດ
໑໐. ຄິຫິສາມີຈິສູດ

# ໔. ປັດຕະກຳມະວັກ

## ໝວດວ່າດ້ວຍກຳອັນສົມຄວນ

## ໑. ປັດຕະກຳມະສູດ

### ວ່າດ້ວຍກຳອັນສົມຄວນ

[໖໑] ຄັ້ງນັ້ນແລ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນທິກະຄະຫະບໍດີ ດັ່ງນີ້ ວ່າ ຄະຫະບໍດີ ທຳ ໔ ປະການນີ້ເປັນສິ່ງໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ທຳ ໔ ປະການ ອັນໃດແດ່ ຄື

໑. ຂໍໂພຄະຈົ່ງເກີດຂຶ້ນແກ່ເຮົາພ້ອມກັບຄວາມຊອບທຳ ນີ້ເປັນທຳປະການທີ ໑ ທີ່ໜ້າ ປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

໒. ເຮົາໄດ້ໂພຄະຊັບພ້ອມກັບຄວາມຊອບທຳແລ້ວ ຂໍຍົດຈົ່ງເຟື່ອງຟູແກ່ເຮົາພ້ອມດ້ວຍຍາດ ມິດ ສະຫາຍ ນີ້ເປັນທຳປະການທີ ໒ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

໓. ເຮົາໄດ້ໂພຄະຊັບພ້ອມກັບຄວາມຊອບທຳ ໄດ້ຍົດພ້ອມດ້ວຍຍາດ ມິດສະຫາຍແລ້ວ ຂໍເຮົາຈົ່ງມີຊີວິດຢູ່ດົນ ຖືຮັກສາອາຍຸໃຫ້ຍັ້ງຍືນ ນີ້ເປັນ ທຳປະການທີ ໓ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກ ໃນໂລກ

໔. ເຮົາໄດ້ໂພຄະຊັບພ້ອມກັບຄວາມຊອບທຳ ໄດ້ຍົດພ້ອມດ້ວຍຍາດມິດສະຫາຍ ມີຊີວິດຢູ່ດົນ ຖືຮັກສາອາຍຸໃຫ້ຍັ້ງຍືນແລ້ວ ຫຼັງຈາກຕາຍແລ້ວ ຂໍໃຫ້ເຮົາເຂົ້າເຖິງສຸຄະຕິໂລກສະຫວັນ ນີ້ເປັນທຳປະການທີ ໔ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ຄະຫະບໍດີ ທຳ ໔ ປະການນີ້ແລ ເປັນສິ່ງໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ ຍາກໃນໂລກ

ຄະຫະບໍດີ ທຳ ໔ ປະການ ຍ່ອມເປັນໄປເພື່ອໄດ້ທຳ ໔ ປະການນີ້ແລ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ທຳ ๔ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ)
໒. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໓. ຈາຄະສຳປະທາ (ຄວາມເຖິງພ້ອມດ້ວຍການເສຍສະລະ)
໔. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ສັດທາສຳປະທາ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ມີສັດທາ ເຊື່ອປັນຍາຕັດສະຣູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ນີ້ຮຽກວ່າ ສັດທາສຳປະທາ

ສີລະສຳປະທາ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະສຳປະທາ

ຈາຄະສຳປະທາ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານ ແລະການຈຳແນກທານ ຢູ່ຄອງເຮືອນ ນີ້ຮຽກວ່າ ຈາຄະສຳປະທາ

ປັນຍາສຳປະທາ ເປັນແນວໃດ?

ຄື ບຸກຄົນມີໃຈຖືກອະພິດຊາວິສະມະໂລພະຄອບງຳຢູ່ ຍ່ອມເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ເມື່ອເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ຍ່ອມເສື່ອມຈາກຍົດແລະຄວາມສຸກ ບຸກຄົນມີໃຈຖືກພະຍາບາດ (ຄວາມຄິດຮ້າຍ) ຄອບງຳຢູ່ ຍ່ອມເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ເມື່ອເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ຍ່ອມເສື່ອມຈາກຍົດແລະຄວາມສຸກ ມີໃຈຖືກຖີນະມິດທະ (ຄວາມທໍ້ຖອຍແລະເຊື່ອງຊຶມ) ຄອບງຳຢູ່ ຍ່ອມເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ເມື່ອເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ຍ່ອມເສື່ອມຈາກຍົດແລະຄວາມສຸກ ມີໃຈຖືກອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ຄອບງຳຢູ່

ມີໃຈຖືກວິຈິກິດສາ (ຄວາມລັງເລສົງໄສ) ຄອບງຳຢູ່ ຍ່ອມເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ເມື່ອເຮັດສິ່ງທີ່ບໍ່ຄວນເຮັດ ບໍ່ຍິນດີສິ່ງທີ່ຄວນເຮັດ ຍ່ອມເສື່ອມຈາກຍົດແລະຄວາມສຸກ

ອະຣິຍະສາວົກນັ້ນແລ ຮູ້ວ່າ "ອະພິດຊາວິສະມະໂລພະເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະອະພິດຊາວິສະມະໂລພະທີ່ເຮັດໃຫ້ຈິດເສົ້າໝອງ

ຮູ້ວ່າ "ພະຍາບາດເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະພະຍາບາດທີ່ເຮັດໃຫ້ຈິດເສົ້າໝອງ

ຮູ້ວ່າ "ຖີນະມິດທະເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະຖີນະມິດທະທີ່ເຮັດໃຫ້ຈິດເສົ້າໝອງ

ຮູ້ວ່າ "ອຸດທັດຈະກຸກກຸດຈະເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະອຸດທັດຈະກຸກກຸດຈະທີ່ເຮັດໃຫ້ຈິດເສົ້າໝອງ

ຮູ້ວ່າ "ວິຈິກິດສາເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະວິຈິກິດສາທີ່ເຮັດໃຫ້ຈິດເສົ້າໝອງ

ເມື່ອໃດອະຣິຍະສາວົກຮູ້ວ່າ "ອະພິດຊາວິສະມະໂລພະເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະອະພິດຊາວິສະມະໂລພະທີ່ເຮັດໃຫ້ຈິດເສົ້າໝອງ ຮູ້ວ່າ "ພະຍາບາດເຮັດໃຫ້ຈິດເສົ້າໝອງ" ฯລฯ ຮູ້ວ່າ "ຖີນະມິດທະເຮັດໃຫ້ຈິດເສົ້າໝອງ" ฯລฯ ຮູ້ວ່າ "ອຸດທັດຈະກຸກກຸດຈະເຮັດໃຫ້ຈິດເສົ້າໝອງ" ฯລฯ ຮູ້ວ່າ "ວິຈິກິດສາເຮັດໃຫ້ຈິດເສົ້າໝອງ" ຈຶ່ງລະວິຈິກິດສາທີ່ເຮັດໃຫ້ຈິດເສົ້າໝອງ ເມື່ອນັ້ນອະຣິຍະສາວົກນີ້ ຊື່ວ່າມີປັນຍາຫຼາຍ ມີປັນຍາກວ້າງຂວາງ ເບິ່ງເຫັນແນວທາງ ສົມບູນດ້ວຍປັນຍາ ນີ້ຮຽກວ່າ ປັນຍາສຳປະທາ

ຄະຫະບໍດີ ທຳ ๔ ປະການນີ້ຍ່ອມເປັນໄປເພື່ອໄດ້ທຳ ๔ ປະການນີ້ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ອະຣິຍະສາວົກນັ້ນແລ ຊື່ວ່າ ເຮັດກຳອັນສົມຄວນ ๔ ປະການດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ

ກຳອັນສົມຄວນ ๔ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ຍ່ອມບຳຣຸງຕົນເອງ ມານດາ ບິດາ ບຸດ ພັນລະຍາ ທາດ ກຳກອນ ຄົນຮັບໃຊ້ ມິດ ແລະອຳມາດໃຫ້ເປັນສຸກ ບໍລິຫານໃຫ້ເປັນສຸກ ໂດຍຊອບທຳດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ນີ້ເປັນຖານະທີ ໑ ທີ່ອະຣິຍະສາວົກນັ້ນເຖິງແລ້ວ ເຖິງໂດຍສົມຄວນ ໃຊ້ສອຍຕາມເຫດ

໔. ອະຣິຍະສາວົກຍ່ອມປ້ອງກັນອັນຕະລາຍທີ່ເກີດຈາກໄຟ ນ້ຳ ພຣະຣາຊາ ໂຈນ ຄົນທີ່ບໍ່ມັກກັນ ຫຼື ຈາກທາຍາດດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມ ຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍ ເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບ ດ້ວຍທຳ ໄດ້ມາໂດຍທຳ ເຮັດຕົນໃຫ້ປອດໄພ ນີ້ເປັນຖານະທີ ໔ ທີ່ອະຣິຍະ ສາວົກນັ້ນເຖິງແລ້ວ ເຖິງໂດຍສົມຄວນ ໃຊ້ສອຍຕາມເຫດ

໓. ອະຣິຍະສາວົກຍ່ອມເຮັດພິກຳ ໕ ຢ່າງ ຄື ຍາຕິພີ ອະຕິຖີພີ ປຸບພະເປຕະພີ ຣາຊະພີ ເທວະຕາພີ ດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນ ພຽນ ເກັບຮີບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳໄດ້ມາ ໂດຍທຳ ນີ້ເປັນຖານະທີ ໓ ທີ່ອະຣິຍະສາວົກນັ້ນເຖິງແລ້ວ ເຖິງໂດຍສົມຄວນ ໃຊ້ສອຍຕາມເຫດ

໔. ອະຣິຍະສາວົກພ່ຳເພັງທັກຂິນາທີ່ມີຜົນສູງຂຶ້ນໄປ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ໄວ້ໃນສະມະນະພາມຜູ້ເວັ້ນຂາດຈາກ ຄວາມມົວເມົາ ແລະຄວາມຜະໝາດ ຜູ້ດຳຣົງໝັ້ນຢູ່ໃນຂັນຕິ ແລະໂສຣັດຈະ ເຝິກອົບຮົມຕົນ ເຮັດຕົນໃຫ້ສະງົບ ເຮັດຕົນໃຫ້ດັບເຢັນສະນິດດ້ວຍໂພຄະຊັບ ທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍເຫື່ອແຮງ ອາບ ເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ນີ້ເປັນຖານະທີ ໔ ທີ່ອະຣິຍະ ສາວົກນັ້ນເຖິງແລ້ວ ເຖິງໂດຍ ສົມຄວນ ໃຊ້ສອຍຕາມເຫດ

ຄະຫະບໍດີ ອະຣິຍະສາວົກນັ້ນຊື່ວ່າ ເຮັດກຳອັນສົມຄວນ ໔ ປະການນີ້ດ້ວຍໂພຄະຊັບທີ່ ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບ ດ້ວຍທຳ ໄດ້ມາໂດຍທຳ ໂພຄະຊັບຂອງໃຜກໍຕາມ ໝົດສິ້ນໄປເພາະກຳອື່ນ ນອກຈາກກຳອັນ ສົມຄວນ ໔ ປະການນີ້ ໂພຄະຊັບເຫຼົ່ານີ້ ເຮົາຮຽກວ່າ ເຖິງແລ້ວໂດຍບໍ່ແມ່ນເຫດ ເຖິງໂດຍບໍ່ ສົມຄວນ ໃຊ້ສອຍຕາມເຫດອັນບໍ່ຄວນ ສ່ວນໂພຄະຊັບຂອງໃຜກໍຕາມ ໝົດສິ້ນໄປເພາະກຳອັນ ສົມຄວນ ໔ ປະການນີ້ ໂພຄະຊັບເຫຼົ່ານີ້ ເຮົາຮຽກວ່າ ເຖິງແລ້ວໂດຍເຫດ ເຖິງໂດຍສົມຄວນ ໃຊ້ສອຍຕາມເຫດ

ນໍຣະຊົນຜູ້ຈະຕ້ອງຕາຍເມື່ອຄຳນຶງເຖິງວ່າ
"ໂພຄະຊັບທັງຫຼາຍເຮົາໄດ້ບໍຣິໂພກແລ້ວ
ຄົນທີ່ຄວນລ້ຽງເຮົາໄດ້ລ້ຽງແລ້ວ
ອັນຕະລາຍທັງຫຼາຍເຮົາໄດ້ຂ້າມພົ້ນແລ້ວ
ທັກຂິນາທີ່ມີຜົນສູງຂຶ້ນໄປເຮົາໄດ້ໃຫ້ແລ້ວ
ແລະພີກຳ ໕ ຢ່າງເຮົາໄດ້ເຮັດແລ້ວ

ທ່ານຜູ້ມີສິນ ສັງລວມຣະວັງ
ປະພຶດພົມມະຈັນເຮົາໄດ້ບຳຣຸງແລ້ວ
ປະໂຫຍດທີ່ບັນດິດຜູ້ຢູ່ຄອງເຮືອນປາຖະໜາ
ເຮົາກໍໄດ້ບັນລຸແລ້ວໂດຍລຳດັບ
ກຳທີ່ບໍ່ກໍ່ຄວາມເດືອດຮ້ອນໃນພາຍຫຼັງເຮົາໄດ້ເຮັດແລ້ວ”
ຊື່ວ່າເປັນຜູ້ຕັ້ງຢູ່ໃນອະຣິຍະທຳ
ບັນດິດທັງຫຼາຍຍ່ອມສັນເສີນເຂົາໃນຊາດນີ້ເອງ
ເຂົາຕາຍໄປແລ້ວຍ່ອມບັນເທີງໃນສະຫວັນ

**ປັດຕະກຳມະສູດທີ ໑ ຈົບ**

## ໘. ອານັນຍະສູດ

## ວ່າດ້ວຍສຸກເກີດຈາກຄວາມບໍ່ເປັນໜີ້

[໖໘] ຄັ້ງນັ້ນແລ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດກັບອະນາຖະບິນທິກະຄະຫະບໍດີ ດັ່ງນີ້ ວ່າ

ຄະຫະບໍດີ ສຸກ ໔ ປະການນີ້ຄະລິຫັດຜູ້ບໍຣິໂພກການເພິ່ງໄດ້ຮັບຕາມການ ຕາມສະໄໝ

ສຸກ ໔ ປະການ ອັນໃດແດ່ ຄື

໑. ອັດຖິສຸກ (ສຸກເກີດຈາກຄວາມມີຊັບ)
໒. ໂພຄະສຸກ (ສຸກເກີດຈາກການໃຊ້ຈ່າຍຊັບ)
໓. ອານັນຍະສຸກ (ສຸກເກີດຈາກຄວາມບໍ່ເປັນໜີ້)
໔. ອະນະວັດຊະສຸກ (ສຸກເກີດຈາກຄວາມປະພຶດທີ່ບໍ່ມີໂທດ)

ອັດຖິສຸກ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ ມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ເຂົາໄດ້ຮັບສຸກ ໂສມະນັດວ່າ “ເຮົາມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ” ນີ້ຮຽກວ່າ ອັດຖິສຸກ

ໂພຄະສຸກ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ ໃຊ້ສອຍໂພຄະຊັບ ແລະເຮັດບຸນດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທໍາ ໄດ້ມາໂດຍທໍາ ເຂົາໄດ້ຮັບສຸກໂສມະນັດວ່າ "ເຮົາໃຊ້ສອຍໂພຄະຊັບ ແລະເຮັດບຸນດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທໍາ ໄດ້ມາໂດຍທໍາ" ນີ້ຮຽກວ່າ ໂພຄະສຸກ

ອານັນຍະສຸກ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ບໍ່ເປັນໜີ້ໃຜ ບໍ່ວ່າຈະໜ້ອຍ ຫຼື ຫຼາຍກໍຕາມ ເຂົາໄດ້ຮັບສຸກໂສມະນັດວ່າ "ເຮົາບໍ່ເປັນໜີ້ໃຜ ບໍ່ວ່າຈະໜ້ອຍ ຫຼື ຫຼາຍ" ນີ້ຮຽກວ່າ ອານັນຍະສຸກ

ອະນະວັດຊະສຸກ ເປັນແນວໃດ?

ຄື ອະຣິຍະສາວົກໃນທໍາວິໄນນີ້ ປະກອບດ້ວຍກາຍຍະກໍາທີ່ບໍ່ມີໂທດ ວະຈີກໍາທີ່ບໍ່ມີໂທດ ແລະມະໂນກໍາທີ່ບໍ່ມີໂທດ ເຂົາໄດ້ຮັບສຸກໂສມະນັດວ່າ "ເຮົາປະກອບດ້ວຍກາຍຍະກໍາ ທີ່ບໍ່ມີໂທດ ວະຈີກໍາທີ່ບໍ່ມີໂທດ ມະໂນກໍາທີ່ບໍ່ມີໂທດ" ນີ້ຮຽກວ່າ ອະນະວັດຊະສຸກ

ຄະຫະບໍດີ ຄະລິຫັດຜູ້ບໍຣິໂພກກາມເພິ່ງໄດ້ຮັບສຸກ ໔ ປະການນີ້ແລ ຕາມການຕາມສະໄໝ

ນໍຣະຊົນຜູ້ຈະຕ້ອງຕາຍ
ຮູ້ສຸກເກີດຈາກຄວາມບໍ່ເປັນໜີ້
ຣະນຶກເຖິງສຸກເກີດຈາກຄວາມມີຊັບ
ສະເຫວີຍສຸກເກີດຈາກການໃຊ້ຈ່າຍຊັບ
ຍ່ອມເຫັນແຈ້ງດ້ວຍປັນຍາ
ຜູ້ມີປັນຍາດີເຫັນແຈ້ງຢູ່ແນວນີ້ຍ່ອມຮູ້ສ່ວນທັງ ໔ ວ່າ
ສຸກແມ່ນທັງ ໓ ນີ້ມີຄ່າບໍ່ເຖິງສ່ວນທີ ໑໖
ແຫ່ງສຸກເກີດຈາກຄວາມປະພຶດອັນບໍ່ມີໂທດ

**ອານັນຍະສູດທີ ໘ ຈົບ**

## ໓. ພົມສູດ

### ວ່າດ້ວຍສະກຸນທີ່ມີພົມ

[໗໓] ພິກຂຸທັງຫຼາຍ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີພົມ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີ ບຸຣະພາຈານ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີບຸຣະພະເທບ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າ ມີອາຫຸໄນຍະບຸກຄົນ

ຄຳວ່າ "ພົມ" ນີ້ເປັນຊື່ຂອງມານດາບິດາ ຄຳວ່າ "ບຸຣະພາຈານ" ນີ້ເປັນຊື່ ຂອງມານດາບິດາ ຄຳວ່າ "ບຸຣະພະເທບ" ນີ້ເປັນຊື່ຂອງມານດາບິດາ ຄຳວ່າ "ອາຫຸໄນຍະບຸກຄົນ" ນີ້ເປັນຊື່ຂອງມານດາບິດາ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນມານດາບິດາມີອຸປະກາຣະຫຼາຍ ບຳຣຸງລ້ຽງ ສະແດງໂລກນີ້ແກ່ບຸດ

ມານດາບິດາຜູ້ອະນຸເຄາະປະຊາ
ທ່ານຮຽກວ່າພົມ ບຸຣະພາຈານ
ແລະອາຫຸໄນຍະບຸກຄົນຂອງບຸດທັງຫຼາຍ
ຍ້ອນເຫດນັ້ນ ບັນດິດເພິ່ງນະມັດສະການ
ແລະສັກກາຣະມານດາບິດານັ້ນດ້ວຍເຂົ້າ ນໍ້າ ຜ້າ ບ່ອນນອນ
ການອົບກົ່ນ ການໃຫ້ອາບນໍ້າ ແລະການລ້າງຕີນ
ຍ້ອນການປົນນິບັດມານດາບິດານັ້ນແລ
ບັນດິດທັງຫຼາຍຈຶ່ງສັນເສີນເຂົາໃນໂລກນີ້ເອງ
ເຂົາຕາຍໄປແລ້ວຍ່ອມບັນເທີງໃນສະຫວັນ

**ພົມສູດທີ ໓ ຈົບ**

## ໔. ນິຣະຍະສູດ

### ວ່າດ້ວຍທຳເປັນເຫດໃຫ້ເກີດໃນນະຮົກ

[໗໔] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ ໃນນະຮົກເໝືອນຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຂ້າສັດ ໒. ລັກຊັບ
໓. ປະພຶດຜິດໃນກາມ ໔. ເວົ້າຕົວະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ ໃນນະຣົກ ເໝືອນຖືກນຳໄປຝັງໄວ້

ການຂ້າສັດ ການລັກຊັບ ການເວົ້າຕົວະ
ແລະການຄົບຫາພັນລະຍາຂອງຜູ້ອື່ນ
ເຮົາກ່າວວ່າເປັນກຳເສົ້າໝອງ
ບັນດິດທັງຫຼາຍຍ່ອມບໍ່ສັນເສີນເລີຍ

**ນິຣະຍະສູດທີ ໔ ຈົບ**

# ໕. ຣູບປະສູດ

## ວ່າດ້ວຍບຸກຄົນຜູ້ຖືຣູບເປັນປະມານ

[໖໕] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ຖືຣູບເປັນປະມານ ເຫຼື້ອມໃສໃນຣູບ
໒. ບຸກຄົນຜູ້ຖືສຽງເປັນປະມານ ເຫຼື້ອມໃສໃນສຽງ
໓. ບຸກຄົນຜູ້ຖືຄວາມເສົ້າໝອງເປັນປະມານ ເຫຼື້ອມໃສໃນຄວາມເສົ້າໝອງ
໔. ບຸກຄົນຜູ້ຖືທຳເປັນປະມານ ເຫຼື້ອມໃສໃນທຳ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີປາກົດຢູ່ໃນໂລກ

ຊົນເຫຼົ່າໃດຖືປະມານໃນຣູບ
ແລະຊົນເຫຼົ່າໃດຄ້ອຍໄປຕາມສຽງ
ຊົນເຫຼົ່ານັ້ນຊື່ວ່າຕົກຢູ່ໃນອຳນາດຂອງສັນທະຣາຄະ
ຍ່ອມບໍ່ຮູ້ຈັກບຸກຄົນນັ້ນ ຄື
ບຸກຄົນນັ້ນແລເປັນຄົນຈ້ຳ ບໍ່ຮູ້ຄຸນພາຍໃນຂອງເຂົາ
ແລະບໍ່ເຫັນຂໍ້ປະຕິບັດພາຍນອກຂອງເຂົາ
ຖືກຫ້ອມລ້ອມໄວ້ໂດຍຮອບ ຍ່ອມຖືກສຽງຊັກນຳໄປ

ອັນໜຶ່ງ ບຸກຄົນຜູ້ບໍ່ຮູ້ຄຸນພາຍໃນ
ແຕ່ເຫັນຂໍ້ປະຕິບັດພາຍນອກ
ແນມແຕ່ຜິນໃນພາຍນອກ
ຍ່ອມຖືກສຽງຊັກນຳໄປ
ສ່ວນບຸກຄົນທີ່ຮູ້ຄຸນພາຍໃນ
ແລະເຫັນແຈ້ງຂໍ້ປະຕິບັດພາຍນອກ
ເຫັນທຳປາສະຈາກເຄື່ອງກັ້ນ
ຍ່ອມບໍ່ຖືກສຽງຊັກນຳໄປ

**ຮູບປະສູດທີ ໕ ຈົບ**

## ໖. ສະຣາຄະສູດ

## ວ່າດ້ວຍບຸກຄົນຜູ້ມີຣາຄະ

[໖໖] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ມີຣາຄະ ໔. ບຸກຄົນຜູ້ມີໂທສະ
໒. ບຸກຄົນຜູ້ມີໂມຫະ ໔. ບຸກຄົນຜູ້ມີມານະ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ຊົນທັງຫຼາຍຜູ້ກຳໜັດຫຼາຍ
ໃນທຳທີ່ເປັນເຫດແຫ່ງຄວາມກຳໜັດ
ເພີດເພີນຢ່າງຍິ່ງໃນຮູບທີ່ໜ້າຮັກ
ເປັນສັດຕ່ຳຊາມ ຖືກໂມຫະ (ຄວາມຫຼົງ) ຫຸ້ມຫໍ່ໄວ້
ຍ່ອມເຮັດໃຫ້ເຄື່ອງຜູກພັນຈະເລີນຂຶ້ນ
ເປັນຄົນບໍ່ສະຫຼາດ ເຮັດອະກຸສົນກຳທີ່ເກີດຈາກຣາຄະແດ່
ເກີດຈາກໂທສະແດ່ ເກີດຈາກໂມຫະແດ່
ທີ່ມີແຕ່ຄວາມຄັບແຄ້ນ ເພີ່ມທຸກຢູ່ເລື້ອຍໄປ
ສັດທີ່ຖືກອະວິດຊາ (ຄວາມບໍ່ຮູ້) ຫຸ້ມຫໍ່ໄວ້
ເປັນຜູ້ມືດບອດ ປາສະຈາກຈັກຂຸຄືປັນຍາ

ມີສະພາວະເໝືອນທຳທັງຫຼາຍທີ່ມີຢູ່
ຍ່ອມບໍ່ສຳຄັນວ່າເຮົາທັງຫຼາຍກໍມີສະພາວະຄືແນວນັ້ນ

**ສະຣາຄະສູດທີ ៦ ຈົບ**

## ໗. ອະຫິຣາຊະສູດ

## ວ່າດ້ວຍຕະກູນພະຍານາງ

[໖໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ພິກຂຸອົງໜຶ່ງໃນເຂດເມືອງສາວັດຖີຖືກງູກັດ ເຖິງແກ່ມໍຣະນະພາບ ລຳດັບນັ້ນ ພິກຂຸຫຼາຍອົງພາກັນໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸອົງໜຶ່ງໃນເຂດເມືອງສາວັດຖີຖືກງູກັດ ເຖິງແກ່ມໍຣະນະພາບແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພິກຂຸນັ້ນ ຄົງຈະບໍ່ໄດ້ແຜ່ເມດຕາຈິດໃຫ້ຕະກູນພະຍານາງ ໔ ຕະກູນ ເພາະຖ້າທ່ານແຜ່ເມດຕາຈິດໃຫ້ຕະກູນພະຍານາງ ໔ ຕະກູນ ທ່ານກໍຈະບໍ່ຖືກງູກັດເຖິງແກ່ມໍຣະນະພາບ

ຕະກູນພະຍານາງ ໔ ຕະກູນໃດແດ່ ຄື

໑. ຕະກູນພະຍານາງຊື່ ວິຣູປັກ
໒. ຕະກູນພະຍານາງຊື່ ເອຣາປະຖະ
໓. ຕະກູນພະຍານາງຊື່ ສັບພະຍາບຸດ
໔. ຕະກູນພະຍານາງຊື່ ກັນຫາໂຄຕະມະກະ

ພິກຂຸນັ້ນຄົງຈະບໍ່ໄດ້ແຜ່ເມດຕາຈິດໃຫ້ຕະກູນພະຍານາງ ໔ ຕະກູນນີ້ ເພາະຖ້າທ່ານແຜ່ເມດຕາ ຈິດໃຫ້ຕະກູນພະຍານາງ ທ່ານກໍຈະບໍ່ຖືກງູກັດເຖິງແກ່ມໍຣະນະພາບ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸແຜ່ເມດຕາຈິດໃຫ້ຕະກູນພະຍານາງ ໔ ຕະກູນນີ້ ເພື່ອຄຸ້ມຄອງຕົນ ເພື່ອຖືຮັກສາຕົນ ເພື່ອປ້ອງກັນຕົນ"

ເຮົາຂໍມີເມດຕາຕໍ່ຕະກູນພະຍານາງວິຣູປັກ
ເຮົາຂໍມີເມດຕາຕໍ່ຕະກູນພະຍານາງເອຣາປະຖະ
ເຮົາຂໍມີເມດຕາຕໍ່ຕະກູນພະຍານາງສັບພະຍາບຸດ
ເຮົາຂໍມີເມດຕາຕໍ່ຕະກູນພະຍານາງກັນຫາໂຄຕະມະກະ

ເຮົາຂໍມີເມດຕາຕໍ່ສັດບໍ່ມີຕີນ
ເຮົາຂໍມີເມດຕາຕໍ່ສັດສອງຕີນ
ເຮົາຂໍມີເມດຕາຕໍ່ສັດສີ່ຕີນ
ເຮົາຂໍມີເມດຕາຕໍ່ສັດຫຼາຍຕີນ
ສັດບໍ່ມີຕີນຢ່າໄດ້ບຽດບຽນເຮົາ
ສັດສອງຕີນຢ່າໄດ້ບຽດບຽນເຮົາ
ສັດສີ່ຕີນຢ່າໄດ້ບຽດບຽນເຮົາ
ສັດຫຼາຍຕີນຢ່າໄດ້ບຽດບຽນເຮົາ
ຂໍສັບພະສັດທີ່ມີລົມຫັນໃຈ
ຂໍສັບພະສັດທີ່ຍັງມີຊີວິດທັງມວນ
ຈົ່ງປະສົບກັບຄວາມຈະເລີນ
ຄວາມຊົ່ວຮ້າຍຢ່າໄດ້ມາບຽດບຽນສັດໃດ ໆ ເລີຍ

ພຣະພຸດທະເຈົ້າມີພຣະຄຸນຫາປະມານບໍ່ໄດ້ ພຣະທຳມີພຣະຄຸນຫາປະມານບໍ່ໄດ້ ພຣະສົງມີພຣະຄຸນຫາປະມານບໍ່ໄດ້ ສັດເລືອຄານທັງຫຼາຍ ຄື ງູ ແມງງອດ ຂີ້ເຂັບ ແມງມຸມ ກັບແກ້ ໜູມີຄຸນພໍປະມານ

ເຮົາທຳການຖືຮັກສາ ທຳການປ້ອງກັນໄວ້ແລ້ວ ຂໍໝູ່ສັດຜູ້ມີຊີວິດທັງຫຼາຍຈົ່ງຫຼີກໄປ ເຮົານັ້ນຂໍນອບນ້ອມພຣະຜູ້ມີພຣະພາກເຈົ້າ ຂໍນອບນ້ອມພຣະສຳມາສຳພຸດທະເຈົ້າທັງ ກ ພຣະອົງ

**ອະຫິຣາຊະສູດທີ ກ ຈົບ**

## ໘. ເທວະທັດຕະສູດ

## ວ່າດ້ວຍພຣະເທວະທັດ

[໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄື ໃນບ່ອນນັ້ນ ເມື່ອພຣະເທວະທັດຫຼີກໄປບໍ່ດົນປານໃດ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຜາຣົບພຣະເທວະທັດວ່າ "ພິກຂຸທັງຫຼາຍ ລາບສັກກາຣະ ແລະຊື່ສຽງ ເກີດຂຶ້ນແກ່ພຣະເທວະທັດເພື່ອຂ້າຕົນ ເພື່ອຄວາມເສື່ອມ

ລາບສັກກາຣະ ແລະຊື່ສຽງເກີດຂຶ້ນແກ່ພຣະເທວະທັດເພື່ອຂ້າຕົນ ເພື່ອຄວາມເສື່ອມ ຄືຕົ້ນກ້ວຍອອກປີເພື່ອຂ້າຕົນ ເພື່ອຄວາມພິນາດ

ລາບສັກກາຣະ ແລະຊື່ສຽງເກີດຂຶ້ນແກ່ພຣະເທວະທັດເພື່ອຂ້າຕົນ ເພື່ອຄວາມເສື່ອມ ຄື ຕົ້ນໄຜ່ຕົກຂິເພື່ອຂ້າຕົນ ເພື່ອຄວາມພິນາດ

ລາບສັກກາຣະ ແລະຊື່ສຽງເກີດຂຶ້ນແກ່ພຣະເທວະທັດເພື່ອຂ້າຕົນ ເພື່ອຄວາມເສື່ອມ ຄື ໄມ້ອໍ້ອອກດອກເພື່ອຂ້າຕົນເອງ ເພື່ອຄວາມພິນາດ

ລາບສັກກາຣະ ແລະຊື່ສຽງເກີດຂຶ້ນແກ່ພຣະເທວະທັດເພື່ອຂ້າຕົນ ເພື່ອຄວາມເສື່ອມ ຄື ແມ່ມ້າອັດສະດອນຖືພາເພື່ອຂ້າຕົນ ເພື່ອຄວາມພິນາດ"

ສັກກາຣະຍ່ອມຂ້າບຸຣຸດຊົ່ວ
ເໝືອນປີກ້ວຍຂ້າຕົ້ນກ້ວຍ
ຂີໄຜ່ຂ້າຕົ້ນໄຜ່ ດອກອໍ້ຂ້າຕົ້ນອໍ້
ລູກມ້າອັດສະດອນຂ້າແມ່ມ້າສັນນັ້ນ

**ເທວະທັດຕະສູດທີ ໗ ຈົບ**

## ໘. ປະທານະສູດ

## ວ່າດ້ວຍປະທານ

[໖໘] ພິກຂຸທັງຫຼາຍ ປະທານ (ຄວາມພຽນ) ໔ ປະການນີ້

ປະທານ ໔ ປະການ ອັນໃດແດ່ ຄື

໑. ສັງວອນປະທານ (ພຽນຣະວັງ)
໒. ປະຫານະປະທານ (ພຽນລະ)
໓. ພາວະນາປະທານ (ພຽນຈະເລີນ)
໔. ອະນຸຣັກຂະນາປະທານ (ພຽນຖືຮັກສາ)

ສັງວອນປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ນີ້ຮຽກວ່າ ສັງວອນປະທານ

ປະຫານະປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ປະຫານະປະທານ

ພາວະນາປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ນີ້ຮຽກວ່າ ພາວະນາປະທານ

ອະນຸຣັກຂະນາປະທານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ອະນຸຣັກຂະນາປະທານ

ພິກຂຸທັງຫຼາຍ ປະທານ ໔ ປະການນີ້ແລ

ປະທານ ໔ ປະການນີ້ ຄື<br>
ສັງວອນປະທານ ປະຫານະປະທານ<br>
ພາວະນາປະທານ ແລະອະນຸຣັກຂະນາປະທານ<br>
ພຣະພຸດທະເຈົ້າຜູ້ເປັນເຜົ່າພັນພຣະອາທິດຊົງສະແດງໄວ້ແລ້ວ<br>
ທີ່ເປັນເຫດໃຫ້ພິກຂຸໃນທຳວິໄນນີ້<br>
ຜູ້ມີຄວາມພຽນເຖິງຄວາມສິ້ນສຸດທຸກ

**ປະທານະສູດທີ ໙ ຈົບ**

## ໑໐. ອະທຳມິກະສູດ

## ວ່າດ້ວຍພຣະຣາຊາຜູ້ບໍ່ຕັ້ງຢູ່ໃນທຳແລະຜູ້ຕັ້ງຢູ່ໃນທຳ

[໗໐] ພິກຂຸທັງຫຼາຍ ໃນເວລາທີ່ພຣະຣາຊາບໍ່ຕັ້ງຢູ່ໃນທຳ ແມ່ນພວກຂ້າຣາດຊະການກໍບໍ່ຕັ້ງຢູ່ໃນທຳ ເມື່ອພວກຂ້າຣາດຊະການບໍ່ຕັ້ງຢູ່ໃນທຳ ແມ່ນພາມ ແລະຄະຫະບໍດີກໍບໍ່ຕັ້ງຢູ່ໃນທຳ ເມື່ອ ພາມ ແລະຄະຫະບໍດີບໍ່ຕັ້ງຢູ່ໃນທຳ ແມ່ນຊາວນິຄົມ ແລະຊາວຊົນນະບົດກໍບໍ່ຕັ້ງຢູ່ໃນທຳ ເມື່ອຊາວນິຄົມ ແລະຊາວຊົນນະບົດບໍ່ຕັ້ງຢູ່ໃນທຳ ດວງຈັນ ແລະດວງອາທິດກໍໂຄຈອນ (ໝຸນ) ໄປບໍ່ສະໝ່ຳສະເໝີ ເມື່ອດວງຈັນ ແລະດວງອາທິດໂຄຈອນໄປບໍ່ສະໝ່ຳສະເໝີ ໝູ່ດາວເລີກກໍໂຄຈອນໄປບໍ່ສະໝ່ຳສະເໝີ ເມື່ອໝູ່ດາວເລີກໂຄຈອນໄປບໍ່ສະໝ່ຳສະເໝີ ຄືນແລະວັນກໍໝຸນວຽນ

ໄປບໍ່ສະໝໍ່າສະເໝີ ເມື່ອຄືນແລະວັນໝູນວຽນໄປບໍ່ສະໝໍ່າສະເໝີ ເດືອນໜຶ່ງ ແລະເຄິ່ງເດືອນກໍ ໝູນວຽນໄປບໍ່ສະໝໍ່າສະເໝີ ເມື່ອເດືອນໜຶ່ງ ແລະເຄິ່ງເດືອນໝູນວຽນໄປບໍ່ສະໝໍ່າສະເໝີ ລະດູ ແລະປີກໍໝູນວຽນໄປບໍ່ສະໝໍ່າສະເໝີ ເມື່ອລະດູ ແລະປີໝູນວຽນໄປບໍ່ສະໝໍ່າສະເໝີ ລົມກໍພັດໄປ ບໍ່ສະໝໍ່າສະເໝີ ພັດໄປຜິດທາງບໍ່ສະໝໍ່າສະເໝີ ເມື່ອລົມພັດໄປບໍ່ສະໝໍ່າສະເໝີ ພັດໄປຜິດທາງ ບໍ່ສະໝໍ່າສະເໝີ ພວກເທວະດາກໍຂັດເຄືອງໃຈ ເມື່ອພວກເທວະດາຂັດເຄືອງໃຈ ຝົນກໍບໍ່ຕົກຕ້ອງ ຕາມລະດູການ ເມື່ອຝົນບໍ່ຕົກຕ້ອງຕາມລະດູການ ເຂົ້າກ້າທັງຫຼາຍກໍອອກຮວງສຸກບໍ່ພ້ອມກັນ

ພິກຂຸທັງຫຼາຍ ມະນຸດທັງຫຼາຍ ບໍຣິໂພກເຂົ້າກ້າທີ່ສຸກບໍ່ພ້ອມກັນຍ່ອມມີອາຍຸໜ້ອຍ ໑ ມີ ຜິວພັນບໍ່ດີ ໑ ມີກໍາລັງບໍ່ດີ ໑ ມີຄວາມເຈັບປ່ວຍຫຼາຍ ໑

ໃນເວລາທີ່ພຣະຣາຊາຕັ້ງຢູ່ໃນທໍາ ແມ່ນພວກຂ້າຣາດຊະການກໍຕັ້ງຢູ່ໃນທໍາ ເມື່ອພວກ ຂ້າຣາດຊະການຕັ້ງຢູ່ໃນທໍາ ແມ່ນພາມ ແລະຄະຫະບໍດີກໍຕັ້ງຢູ່ໃນທໍາ ເມື່ອພາມ ແລະຄະຫະບໍດີ ຕັ້ງຢູ່ໃນທໍາ ແມ່ນຊາວນິຄົມ ແລະຊາວຊົນນະບົດກໍຕັ້ງຢູ່ໃນທໍາ ເມື່ອຊາວນິຄົມ ແລະຊາວຊົນ ນະບົດຕັ້ງຢູ່ໃນທໍາ ດວງຈັນແລະດວງອາທິດກໍໂຄຈອນໄປສະໝໍ່າສະເໝີ ເມື່ອດວງຈັນແລະດວງ ອາທິດໂຄຈອນໄປສະໝໍ່າສະເໝີ ໝູ່ດາວເລີກກໍໂຄຈອນໄປສະໝໍ່າສະເໝີ ເມື່ອໝູ່ດາວເລີກ ໂຄຈອນໄປສະໝໍ່າສະເໝີ ຄືນແລະວັນກໍໝູນວຽນໄປສະໝໍ່າສະເໝີ ເມື່ອຄືນແລະວັນໝູນວຽນໄປ ສະໝໍ່າສະເໝີ ເດືອນໜຶ່ງແລະເຄິ່ງເດືອນກໍໝູນວຽນໄປສະໝໍ່າສະເໝີ ເມື່ອເດືອນໜຶ່ງແລະເຄິ່ງ ເດືອນໝູນວຽນໄປສະໝໍ່າສະເໝີ ລະດູແລະປີກໍ ໝູນວຽນໄປສະໝໍ່າສະເໝີ ເມື່ອລະດູແລະປີໝູນ ວຽນໄປສະໝໍ່າສະເໝີ ລົມກໍພັດໄປສະໝໍ່າສະເໝີ ພັດໄປຖືກທາງສະໝໍ່າສະເໝີ ເມື່ອລົມພັດໄປ ສະໝໍ່າສະເໝີ ພັດໄປຖືກທາງສະໝໍ່າສະເໝີ ພວກເທວະດາກໍບໍ່ຂັດເຄືອງໃຈ ເມື່ອພວກເທວະດາ ບໍ່ຂັດເຄືອງໃຈ ຝົນກໍຕົກຕ້ອງຕາມລະດູການ ເມື່ອຝົນຕົກຕ້ອງຕາມລະດູການ ເຂົ້າກ້າທັງຫຼາຍກໍ ອອກຮວງສຸກພ້ອມກັນ

ພິກຂຸທັງຫຼາຍ ມະນຸດທັງຫຼາຍບໍຣິໂພກເຂົ້າກ້າສຸກພ້ອມກັນຍ່ອມມີອາຍຸຍືນ ໑ ມີຜິວພັນ ຜ່ອງໃສ ໑ ມີກໍາລັງ ໑ ມີຄວາມເຈັບປ່ວຍໜ້ອຍ ໑

ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງຍ່າງຄົດຄ້ຽວ
ງົວທັງຝູງກໍຍ່າງຄົດຄ້ຽວນໍາກັນ
ຍ້ອນງົວຈ່າຝູງຍ່າງຄົດຄ້ຽວ
ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດບໍ່ເປັນທໍາ

ປະຊາຊົນຊາວເມືອງນັ້ນກໍຈະປະພຶດບໍ່ເປັນທຳນຳກັນ
ຫາກພຣະຣາຊາບໍ່ຕັ້ງຢູ່ໃນທຳ
ຊາວເມືອງນັ້ນກໍຢູ່ເປັນທຸກ

ເມື່ອຝູງງົວຂ້າມນ້ຳໄປ
ຖ້າງົວຈ່າຝູງຍ່າງກົງ
ງົວທັງຝູງກໍຍ່າງກົງນຳກັນ
ຍ້ອນງົວຈ່າຝູງໄປກົງ

ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດຊອບທຳ
ປະຊາຊົນຊາວເມືອງນັ້ນກໍຈະປະພຶດຊອບທຳຄືກັນ
ຫາກພຣະຣາຊາຕັ້ງຢູ່ໃນທຳ
ຊາວເມືອງນັ້ນກໍຢູ່ເປັນສຸກ

**ອະທຳມິກະສູດທີ ໑໐ ຈົບ**

**ປັດຕະກຳມະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປັດຕະກຳມະສູດ
໒. ພົມສູດ
໓. ຮູບປະສູດ
໔. ອະຫິຣາຊະສູດ
໕. ປະທານະສູດ
໖. ອານັນຍະສູດ
໗. ນິຣະຍະສູດ
໘. ສະຣາຄະສູດ
໙. ເທວະທັດຕະສູດ
໑໐. ອະທຳມິກະສູດ

# ៣. ອະປັນນະກະວັກ

## ໝວດວ່າດ້ວຍຂໍ້ປະຕິບັດທີ່ບໍ່ຜິດ

## ໑. ປະທານະສູດ

### ວ່າດ້ວຍຄວາມພຽນເປັນເຫດໝົດສິ້ນອາສະວະ

[໗໑] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການຍ່ອມປະຕິບັດປະຕິປະທາທີ່ບໍ່ຜິດ ແລະຊື່ວ່າໄດ້ສ້າງເຫດເພື່ອຄວາມໝົດສິ້ນອາສະວະ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ມີສິນ
໒. ຜາຣົບຄວາມພຽນ
໓. ເປັນພະຫູສູດ
໔. ມີປັນຍາ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມປະຕິບັດປະຕິປະທາ ທີ່ບໍ່ຜິດ ແລະຊື່ວ່າໄດ້ສ້າງເຫດເພື່ອຄວາມໝົດສິ້ນອາສະວະ

**ປະທານະສູດທີ ໑ ຈົບ**

## ໒. ສຳມາທິດຖິສູດ

### ວ່າດ້ວຍສຳມາທິດຖິເປັນເຫດໝົດສິ້ນອາສະວະ

[໗໒] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການຍ່ອມປະຕິບັດປະຕິປະທາທີ່ບໍ່ຜິດ ແລະຊື່ວ່າໄດ້ສ້າງເຫດເພື່ອຄວາມໝົດສິ້ນອາສະວະ

ທຳ ໔ ປະການ ອັນໃດແດ່ ຄື

໑. ເນກຂຳມະວິຕົກ (ຄວາມນຶກປອດຈາກກາມ)
໒. ອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)
໓. ອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ)

໔. ສຳມາທິດຖິ (ຄວາມເຫັນຖືກ)

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມປະຕິບັດປະຕິປະທາ ທີ່ບໍ່ຜິດ ແລະຊື່ວ່າໄດ້ສ້າງເຫດເພື່ອຄວາມໝົດສິ້ນອາສະວະ

**ສຳມາທິດຖິສູດທີ ໘ ຈົບ**

# ໙. ສັບປຸຣິສະສູດ

## ວ່າດ້ວຍທຳຂອງອະສັດຕະບຸຣຸດແລະສັດຕະບຸຣຸດ

[໗໙] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການເພິ່ງຮູ້ວ່າ ເປັນອະສັດຕະບຸຣຸດ ທຳ ໔ ປະການ ອັນໃດແດ່ ຄື

໑. ອະສັດຕະບຸຣຸດໃນໂລກນີ້ ເຖິງບໍ່ມີໃຜຖາມກໍເປີດເຜີຍຂໍ້ເສຍຫາຍຂອງບຸກຄົນອື່ນໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງອະສັດຕະບຸຣຸດຜູ້ຖືກຖາມເລີຍ ແລະອະສັດຕະບຸຣຸດຜູ້ຖືກຖາມກໍຕອບບັນຫາທັນທີ ບໍ່ອ້ອມຄ້ອມ ບໍ່ໜ່ວງໜ່ຽວ ກ່າວເຖິງຂໍ້ເສຍຂອງບຸກຄົນອື່ນຢ່າງລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນອະສັດຕະບຸຣຸດ"

໒. ອະສັດຕະບຸຣຸດເຖິງຖືກໃຜຖາມກໍບໍ່ເປີດເຜີຍຂໍ້ດີຂອງບຸກຄົນອື່ນ ບໍ່ຈຳເປັນຕ້ອງເວົ້າເຖິງອະສັດຕະບຸຣຸດຜູ້ບໍ່ຖືກຖາມເລີຍ ແລະອະສັດຕະບຸຣຸດຜູ້ຖືກຖາມກໍຕອບບັນຫາອ້ອມຄ້ອມ ໜ່ວງໜ່ຽວ ກ່າວສັນເສີນຂໍ້ດີຂອງບຸກຄົນອື່ນບໍ່ລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນອະສັດຕະບຸຣຸດ"

໓. ອະສັດຕະບຸຣຸດເຖິງຖືກໃຜຖາມກໍບໍ່ເປີດເຜີຍຂໍ້ເສຍຂອງຕົນ ບໍ່ຈຳເປັນຕ້ອງເວົ້າເຖິງອະສັດຕະບຸຣຸດຜູ້ບໍ່ຖືກຖາມ ແລະອະສັດຕະບຸຣຸດຜູ້ຖືກຖາມກໍຕອບບັນຫາອ້ອມຄ້ອມ ໜ່ວງໜ່ຽວ ກ່າວເຖິງຂໍ້ເສຍຂອງຕົນບໍ່ລະອຽດເຕັມທີ່ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນອະສັດບຸຣຸດ"

໔. ອະສັດຕະບຸຣຸດເຖິງບໍ່ຖືກໃຜຖາມກໍເປີດເຜີຍຂໍ້ດີຂອງຕົນ ບໍ່ຈຳເປັນຕ້ອງເວົ້າເຖິງອະສັດຕະບຸຣຸດຜູ້ຖືກຖາມ ແລະອະສັດຕະບຸຣຸດຜູ້ຖືກຖາມກໍຟ້າວຕອບບັນຫາ ບໍ່ອ້ອມຄ້ອມ ບໍ່ໜ່ວງໜ່ຽວ ກ່າວສັນເສີນຂໍ້ດີຂອງຕົນຢ່າງລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນອະສັດຕະບຸຣຸດ"

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ເພິ່ງຮູ້ວ່າ ເປັນອະສັດຕະບຸຣຸດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການເພິ່ງຮູ້ວ່າ ເປັນສັດຕະບຸຣຸດ ທຳ ໔ ປະການ ອັນໃດແດ່ ຄື

໑. ສັດຕະບຸຣຸດໃນໂລກນີ້ ເຖິງຖືກໃຜຖາມກໍບໍ່ເປີດເຜີຍຂໍ້ເສຍຂອງບຸກຄົນອື່ນ ບໍ່ຈຳເປັນຕ້ອງເວົ້າເຖິງສັດຕະບຸຣຸດຜູ້ບໍ່ຖືກຖາມ ແລະສັດຕະບຸຣຸດຜູ້ຖືກຖາມກໍຕອບບັນຫາອ້ອມຄ້ອມ ໜ່ວງໜ່ຽວ ກ່າວເຖິງຂໍ້ເສຍຂອງບຸກຄົນອື່ນຢ່າງບໍ່ລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນສັດຕະບຸຣຸດ"

໒. ສັດຕະບຸຣຸດເຖິງບໍ່ຖືກໃຜຖາມກໍເປີດເຜີຍຂໍ້ດີຂອງບຸກຄົນອື່ນ ບໍ່ຈຳເປັນຕ້ອງເວົ້າເຖິງສັດຕະບຸຣຸດຜູ້ຖືກຖາມ ແລະສັດຕະບຸຣຸດຜູ້ຖືກຖາມກໍຟ້າວຕອບບັນຫາບໍ່ອ້ອມຄ້ອມ ບໍ່ໜ່ວງໜ່ຽວ ກ່າວ ສັນເສີນຂໍ້ດີຂອງບຸກຄົນອື່ນຢ່າງລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນສັດຕະບຸຣຸດ"

໓. ສັດຕະບຸຣຸດເຖິງບໍ່ຖືກໃຜຖາມກໍເປີດເຜີຍຂໍ້ເສຍຂອງຕົນ ບໍ່ຈຳເປັນຕ້ອງເວົ້າເຖິງສັດຕະ ບຸຣຸດຜູ້ຖືກຖາມ ແລະສັດຕະບຸຣຸດຜູ້ຖືກຖາມກໍຟ້າວຕອບບັນຫາບໍ່ອ້ອມຄ້ອມ ບໍ່ໜ່ວງໜ່ຽວ ກ່າວຂໍ້ເສຍຂອງຕົນຢ່າງລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນສັດຕະບຸຣຸດ"

໔. ສັດຕະບຸຣຸດເຖິງຖືກໃຜຖາມກໍບໍ່ເປີດເຜີຍຂໍ້ດີຂອງຕົນ ບໍ່ຈຳເປັນຕ້ອງເວົ້າເຖິງສັດຕະບຸຣຸດຜູ້ບໍ່ຖືກຖາມ ແລະສັດຕະບຸຣຸດຜູ້ຖືກຖາມກໍຟ້າວຕອບບັນຫາອ້ອມຄ້ອມ ໜ່ວງໜ່ຽວ ກ່າວສັນເສີນຂໍ້ດີຂອງຕົນຢ່າງບໍ່ລະອຽດເຕັມທີ່ ນີ້ເພິ່ງຮູ້ວ່າ "ຜູ້ນີ້ເປັນສັດຕະບຸຣຸດ"

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລເພິ່ງຮູ້ວ່າ ເປັນສັດຕະບຸຣຸດ

ພິກຂຸທັງຫຼາຍ ຍິງສະໃພ້ມີຄວາມລະອາຍ ແລະຢຳແຢງຫຼາຍໃນແມ່ສາມີ ພໍ່ສາມີ ສາມີ ລວມເຖິງພວກທາດ ກຳກອນ ແລະຄົນຮັບໃຊ້ ຕະຫຼອດໄລຍະເວລາຄືນໜຶ່ງ ຫຼື ວັນໜຶ່ງ ທີ່ນາງຖືກນຳມາ (ສູ່ຕະກູນສາມີ) ສະໄໝຕໍ່ມາ ເພາະອາໄສຢູ່ຈົນຄຸ້ນເຄີຍ ຈຶ່ງກ່າວກັບແມ່ສາມີ ພໍ່ສາມີ ສາມີວ່າ "ຫຼີກໄປ ພວກທ່ານຈະຮູ້ເລື້ອງອັນໃດນໍ?" ແມ່ນສັນໃດ

ພິກຂຸລາງອົງໃນທຳວິໄນນີ້ກໍສັນນັ້ນຄືກັນ ຕະຫຼອດໄລຍະເວລາຄືນໜຶ່ງ ຫຼື ວັນໜຶ່ງທີ່ທ່ານອອກຈາກເຮືອນບວດເປັນບັນພະຊິດ ທ່ານຍັງມີຄວາມລະອາຍ ມີຄວາມຢຳແຢງຫຼາຍໃນເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ລວມເຖິງພວກຄົນວັດ ແລະສະມະນຸດເທດ ສະໄໝຕໍ່ມາ ເພາະອາໄສຢູ່ຮ່ວມກັນຈົນຄຸ້ນເຄີຍ ທ່ານກ່າວກັບອາຈານ ແມ່ນວ່າ ອຸປັດຊາແນວນີ້ວ່າ "ຫຼີກໄປ ພວກທ່ານຈະຮູ້ເລື້ອງອັນໃດນໍ?"

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກມີໃຈເໝືອນຍິງສະໃພ້ທີ່ມາຢູ່ໃໝ່" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ສັບປຸຣິສະສູດທີ ໖ ຈົບ**

## ໔. ປະຖະມະອັກຄະສູດ

## ວ່າດ້ວຍທຳອັນເລີດ ສູດທີ ໑

[໗໔] ພິກຂຸທັງຫຼາຍ ທຳອັນເລີດ ໔ ປະການນີ້

ທຳອັນເລີດ ໔ ປະການ ອັນໃດແດ່ ຄື

໑. ສີນອັນເລີດ
໒. ສະມາທິອັນເລີດ
໖. ປັນຍາອັນເລີດ
໔. ວິມຸດຕິອັນເລີດ

ພິກຂຸທັງຫຼາຍ ທຳອັນເລີດ ໔ ປະການນີ້ແລ

**ປະຖະມະອັກຄະສູດທີ ໔ ຈົບ**

## ໕. ທຸຕິຍະອັກຄະສູດ

## ວ່າດ້ວຍທຳອັນເລີດ ສູດທີ ໒

[໗໕] ພິກຂຸທັງຫຼາຍ ທຳອັນເລີດ ໔ ປະການນີ້

ທຳອັນເລີດ ໔ ປະການ ອັນໃດແດ່ ຄື

໑. ຮູບອັນເລີດ
໒. ເວທະນາອັນເລີດ
໖. ສັນຍາອັນເລີດ
໔. ພົບອັນເລີດ

ພິກຂຸທັງຫຼາຍ ທຳອັນເລີດ ໔ ປະການນີ້ແລ

**ທຸຕິຍະອັກຄະສູດທີ ໗ ຈົບ**

# ໖. ກຸສິນາຣະສູດ

## ວ່າດ້ວຍພຸດທະກິດໃນເມືອງກຸສິນາຣາ

[ກ໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ລະຫວ່າງຕົ້ນຮັງທັງຄູ່ ໃນສາລະວັນຂອງເຈົ້າມັນລະ ເຊິ່ງເປັນທາງເຂົ້າເມືອງກຸສິນາຣາ ໃນສະໄໝເປັນທີ່ປະຣິນິບພານໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ຖ້າພິກຂຸແມ່ນພຽງອົງດຽວເພິ່ງມີຄວາມສົງໄສ ຫຼື ເຄືອບແຄງໃນພຣະພຸດພຣະທຳ ພຣະສົງ ມັກ ຫຼື ໃນປະຕິປະທາ (ຂໍ້ປະຕິບັດ) ທ່ານທັງຫຼາຍຈົ່ງຖາມເທີ້ນ ຢ່າໄດ້ມີຄວາມເດືອດຮ້ອນໃຈພາຍຫຼັງວ່າ "ພຣະສາດສະດາປະທັບຢູ່ກົງໜ້າຂອງເຮົາທັງຫຼາຍແທ້ ໆ ແຕ່ເຮົາທັງຫຼາຍ ຍັງບໍ່ສາມາດທູນຖາມພຣະຜູ້ມີພຣະພາກເຈົ້າຕໍ່ໜ້າໄດ້" ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ພິກຂຸເຫຼົ່ານັ້ນໄດ້ນິ່ງງຽບຢູ່

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ฯລฯ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

"ພິກຂຸທັງຫຼາຍ ຖ້າພິກຂຸແມ່ນພຽງອົງດຽວເພິ່ງມີຄວາມສົງໄສ ຫຼື ເຄືອບແຄງໃນພຣະພຸດພຣະທຳ ພຣະສົງ ມັກ ຫຼື ໃນປະຕິປະທາ ທ່ານທັງຫຼາຍຈົ່ງຖາມເທີ້ນ ຢ່າໄດ້ມີຄວາມເດືອດຮ້ອນໃຈພາຍຫຼັງວ່າ "ພຣະສາດສະດາປະທັບຢູ່ກົງໜ້າຂອງເຮົາທັງຫຼາຍ ເຮົາທັງຫຼາຍກໍຍັງບໍ່ສາມາດທູນຖາມພຣະຜູ້ມີພຣະພາກເຈົ້າຕໍ່ໜ້າໄດ້"

ແມ່ນເທື່ອທີ ໓ ພິກຂຸເຫຼົ່ານັ້ນກໍຍັງພາກັນນິ່ງງຽບຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ເປັນໄປໄດ້ທີ່ພວກທ່ານທັງຫຼາຍບໍ່ຖາມເພາະຄວາມເຄົາລົບໃນພຣະສາດສະດາ ແມ່ນເພື່ອນຈົ່ງບອກແກ່ເພື່ອນເທີ້ນ" ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ພິກຂຸເຫຼົ່ານັ້ນໄດ້ນິ່ງງຽບ ລຳດັບນັ້ນ ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ຂ້າພຣະອົງເຫຼື້ອມໃສແນວນີ້ວ່າ "ໃນພິກຂຸສົງນີ້ ພິກຂຸແມ່ນແຕ່ຮູບດຽວບໍ່ມີຄວາມສົງໄສ ຫຼື ເຄືອບແຄງໃນ ພຣະພຸດພຣະທຳ ພຣະສົງ ມັກ ຫຼື ໃນປະຕິປະທາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ທ່ານກ່າວຍ້ອນຄວາມເຫຼື້ອມໃສ ໃນເລື້ອງນີ້ ຕະຖາຄົດເອງກໍມີຄວາມຮູ້ຄືກັນວ່າ "ໃນພິກຂຸສົງນີ້ ພິກຂຸແມ່ນແຕ່ຮູບດຽວບໍ່ມີຄວາມສົງໄສ ຫຼື ເຄືອບແຄງ ໃນ ພຣະພຸດ ພຣະທຳ ພຣະສົງ ມັກ ຫຼື ໃນປະຕິປະທາ" ອານົນ ໃນຈຳນວນພິກຂຸ ໕໐໐ ອົງນີ້ ພິກຂຸຜູ້ມີຄຸນທຳຊັ້ນຕ່ຳສຸດ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ ໃນວັນຂ້າງໜ້າ"

**ກຸສິນາຣະສູດທີ ๖ ຈົບ**

## ກ. ອະຈິນເຕີຍຍະສູດ

## ວ່າດ້ວຍອະຈິນໄຕ

[ກກ] ພິກຂຸທັງຫຼາຍ ອະຈິນໄຕ (ເລື້ອງບໍ່ຄວນຄິດ) ໔ ປະການນີ້ບຸກຄົນບໍ່ຄວນຄິດ ໃຜຄິດເພິ່ງມີສ່ວນແຫ່ງຄວາມເປັນບ້າ ຄວາມເດືອດຮ້ອນ

ອະຈິນໄຕ ໔ ປະການ ອັນໃດແດ່ ຄື

໑. ພຸດທະວິໄສຂອງພຣະພຸດທະເຈົ້າທັງຫຼາຍ
໔. ຊານວິໄສຂອງຜູ້ໄດ້ຊານ
໓. ວິບາກແຫ່ງກຳ
໔. ຄວາມຄິດເລື້ອງໂລກ

ພິກຂຸທັງຫຼາຍ ອະຈິນໄຕ ໔ ປະການນີ້ບຸກຄົນບໍ່ຄວນຄິດ ໃຜຄິດເພິ່ງມີສ່ວນແຫ່ງຄວາມເປັນບ້າ ຄວາມເດືອດຮ້ອນ

**ອະຈິນເຕີຍຍະສູດທີ ກ ຈົບ**

## ໗. ທັກຂິນະສູດ

## ວ່າດ້ວຍຄວາມບໍລິສຸດແຫ່ງທັກຂິນາ

[ກ໗] ພິກຂຸທັງຫຼາຍ ຄວາມບໍລິສຸດແຫ່ງທັກຂິນາ (ຂອງເຮັດບຸນ) ໔ ປະການນີ້

ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການ ອັນໃດແດ່ ຄື

໑. ທັກຂິນາທີ່ບໍລິສຸດຝ່າຍທາຍົກ (ຜູ້ໃຫ້) ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ (ຜູ້ຮັບ)

໔. ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ
໓. ທັກຂິນາທີ່ບໍ່ບໍລິສຸດ ທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ
໔. ທັກຂິນາທີ່ບໍລິສຸດ ທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ

ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ປະຕິຄາຫົກເປັນຜູ້ທຸສີນ ມີທຳຊົ່ວຊາມ ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວນີ້ແລ

ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ປະຕິຄາຫົກເປັນຜູ້ມີສີນ ມີກັນລະຍານະທຳ ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວນີ້ແລ

ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ແມ່ນປະຕິຄາຫົກກໍເປັນຜູ້ທຸສີນ ມີ ທຳຊົ່ວຊາມ ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ ເປັນແນວນີ້ແລ

ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ແມ່ນປະຕິຄາຫົກກໍເປັນຜູ້ມີສີນ ມີກັນລະຍານະທຳ ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການນີ້ແລ

**ທັກຂິນະສູດທີ ໘ ຈົບ**

## ໙. ວະນິດຊະສູດ

## ວ່າດ້ວຍເຫດໃຫ້ການຄ້າຂາຍຂາດທຶນຫຼືໄດ້ກຳໄລ

[໗໙] ສະໄໝນັ້ນ ທ່ານພຣະສາຣີບຸດເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ປະກອບການຄ້າຂາຍຂາດທຸນ ອັນໃດ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ປະກອບການຄ້າຂາຍບໍ່ໄດ້ກຳໄລຕາມທີ່ປະສົງ ອັນໃດເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ປະກອບການຄ້າຂາຍໄດ້ກຳໄລຕາມທີ່ປະສົງ ອັນໃດເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ປະກອບການຄ້າຂາຍໄດ້ກຳໄລຍິ່ງກວ່າທີ່ປະສົງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາຣີບຸດ ບຸກຄົນລາງຄົນໃນໂລກນີ້ເຂົ້າໄປຫາສະມະນະ ຫຼື ພາມປະວາຣະນາວ່າ "ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າຕ້ອງການປັດໄຈ ນິມົນບອກເທີ້ນ" ແຕ່ເຂົາກັບບໍ່ຖວາຍປັດໄຈທີ່ປະວາຣະນາໄວ້ ຖ້າເຂົາເຄື່ອນຈາກອັດຕະພາບນັ້ນກັບມາສູ່ຄວາມເປັນມະນຸດນີ້ ເຂົາປະກອບການຄ້າຂາຍໃດ ໆ ກໍຍ່ອມຂາດທຶນ

ບຸກຄົນລາງຄົນໃນໂລກນີ້ເຂົ້າໄປຫາສະມະນະ ຫຼື ພາມປະວາຣະນາວ່າ "ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າຕ້ອງການປັດໄຈ ນິມົນບອກເທີ້ນ" ແຕ່ເຂົາຖວາຍປັດໄຈທີ່ປະວາຣະນາໄວ້ບໍ່ກົງຕາມທີ່ສະມະນະ ຫຼື ພາມປະສົງ ຖ້າເຂົາເຄື່ອນຈາກອັດຕະພາບນັ້ນມາສູ່ຄວາມເປັນມະນຸດນີ້ ເຂົາຈະປະກອບການຄ້າຂາຍໃດ ໆ ກໍບໍ່ໄດ້ກຳໄລຕາມທີ່ປະສົງ

ບຸກຄົນລາງຄົນໃນໂລກນີ້ເຂົ້າໄປຫາສະມະນະ ຫຼື ພາມປະວາຣະນາວ່າ "ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າຕ້ອງການປັດໄຈ ນິມົນບອກເທີ້ນ" ເຂົາຖວາຍປັດໄຈທີ່ປະວາຣະນາໄວ້ຕາມທີ່ສະມະນະ ຫຼື ພາມປະສົງ ຖ້າເຂົາເຄື່ອນຈາກອັດຕະພາບນັ້ນມາສູ່ຄວາມເປັນມະນຸດນີ້ ເຂົາຈະປະກອບການຄ້າຂາຍໃດໆ ກໍໄດ້ກຳໄລຕາມທີ່ປະສົງ

ບຸກຄົນລາງຄົນໃນໂລກນີ້ເຂົ້າໄປຫາສະມະນະ ຫຼື ພາມປະວາຣະນາວ່າ "ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າຕ້ອງການປັດໄຈ ນິມົນບອກເທີ້ນ" ເຂົາຖວາຍປັດໄຈທີ່ປະວາຣະນາໄວ້ຍິ່ງກວ່າທີ່ສະມະນະ ຫຼື ພາມປະສົງ ຖ້າເຂົາເຄື່ອນຈາກອັດຕະພາບນັ້ນມາສູ່ຄວາມເປັນມະນຸດນີ້ ເຂົາຈະປະກອບການຄ້າຂາຍໃດ ໆ ກໍໄດ້ກຳໄລຍິ່ງກວ່າທີ່ປະສົງ

ສາຣີບຸດ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ປະກອບການຄ້າຂາຍຂາດທຶນ ແລະບໍ່ໄດ້ກຳໄລຕາມທີ່ປະສົງ

ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ປະກອບການຄ້າຂາຍໄດ້ກຳໄລຕາມ ທີ່ປະສົງ ແລະໄດ້ກຳໄລຍິ່ງກວ່າທີ່ປະສົງ"

**ວະນິດຊະສູດທີ ៧ ຈົບ**

## ໑໐. ກຳໂພຊະສູດ

## ວ່າດ້ວຍເຫດໃຫ້ມາຕຸຄາມໄປແຄວັນກຳໂພຊະບໍ່ໄດ້

[໘໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໂຄສິຕາຣາມ ເຂດເມືອງໂກສຳພີ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດເປັນເຫດເປັນປັດໄຈເຮັດໃຫ້ມາຕຸຄາມ (ສະຕີ) ນັ່ງໃນສະພາບໍ່ໄດ້ ເຮັດວຽກໃຫຍ່ບໍ່ໄດ້ ໄປແຄວ້ນກໍາໂພຊະກໍບໍ່ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ມາຕຸຄາມເປັນຄົນມັກໂກດ ມັກຣິດສະຫຍາ ຂີ້ຖີ່ ບໍ່ມີປັນຍາ ນີ້ແລ ເປັນເຫດເປັນປັດໄຈ ເຮັດໃຫ້ມາຕຸຄາມນັ່ງໃນສະພາບໍ່ໄດ້ ເຮັດວຽກໃຫຍ່ບໍ່ໄດ້ ໄປແຄວ້ນ ກໍາໂພຊະກໍບໍ່ໄດ້"

**ກໍາໂພຊະສູດທີ ໑໐ ຈົບ**

**ອະປັນນະກະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະທານະສູດ | ໒. ສໍາມາທິດຖິສູດ |
| ໓. ສັບປຸຣິສະສູດ | ໔. ປະຖະມະອັກຄະສູດ |
| ໕. ທຸຕິຍະອັກຄະສູດ | ໖. ກຸສິນາຣະສູດ |
| ໗. ອະຈິນເຕີຍຍະສູດ | ໘. ທັກຂິນະສູດ |
| ໙. ວະນິດຊະສູດ | ໑໐. ກໍາໂພຊະສູດ |

# ໔. ມະຈະລະວັກ

## ໝວດວ່າດ້ວຍສະມະນະຜູ້ບໍ່ຫວັ່ນໄຫວ

## ໑. ປານາຕິປາຕະສູດ

## ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ

[໘໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທໍາ ໔ ປະການຍ່ອມດໍາຣົງຢູ່ໃນນະຣົກເໝືອນຖືກນໍາໄປຝັງໄວ້

ທໍາ ໔ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ເປັນຜູ້ຂ້າສັດ | ໒. ເປັນຜູ້ລັກຊັບ |

໓. ເປັນຜູ້ປະພຶດຜິດໃນກາມ ໔. ເປັນຜູ້ເວົ້າຕົວະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນສະຫວັນເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປານາຕິປາຕະສູດທີ ໑ ຈົບ**

## ໒. ມຸສາວາທະສູດ

## ວ່າດ້ວຍຜູ້ເວົ້າຕົວະແລະຜູ້ເວັ້ນຂາດຈາກການເວົ້າຕົວະ

[໘໒] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວົ້າຕົວະ ໒. ເປັນຜູ້ເວົ້າສັບສໍ່
໓. ເປັນຜູ້ເວົ້າຄຳຫຍາບ ໔. ເປັນຜູ້ເວົ້າບໍ່ມີສາຣະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນສະຫວັນເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໒. ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໓. ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໔. ເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນ ສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມຸສາວາທະສູດທີ ໒ ຈົບ**

## ໓. ອະວັນນາຣະຫະສູດ

## ວ່າດ້ວຍຜູ້ກ່າວສັນເສີນຜູ້ຄວນຕິຕຽນແລະຜູ້ກ່າວຕິຕຽນຜູ້ຄວນຕິຕຽນ

[໗໓] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນນະຣົກ ເໝືອນຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ບໍ່ໄຕ່ຕອງ ບໍ່ພິຈະຣານາ ກ່າວສັນເສີນຜູ້ຄວນຕິຕຽນ
໒. ບໍ່ໄຕ່ຕອງ ບໍ່ພິຈະຣານາ ກ່າວຕິຕຽນຜູ້ຄວນສັນເສີນ
໓. ບໍ່ໄຕ່ຕອງ ບໍ່ພິຈະຣານາ ສະແດງຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ບໍ່ໄຕ່ຕອງ ບໍ່ພິຈະຣານາ ສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນນະຣົກ ເ ໝືອນຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການ°ຍ່ອມດຳຣົງຢູ່ໃນສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ໄຕ່ຕອງ ພິຈະຣານາແລ້ວ ກ່າວຕິຕຽນຜູ້ຄວນຕິຕຽນ
໒. ໄຕ່ຕອງ ພິຈະຣານາແລ້ວ ກ່າວສັນເສີນຜູ້ຄວນສັນເສີນ

໓. ໄຕ່ຕອງ ພິຈະຣານາແລ້ວ ສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ

໔. ໄຕ່ຕອງ ພິຈະຣານາແລ້ວ ສະແດງຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນ ສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະວັນນາຣະຫະສູດທີ ໓ ຈົບ**

## ໔. ໂກທະຄະຣຸສູດ

## ວ່າດ້ວຍຜູ້ມັກໂກດແລະຜູ້ບໍ່ມັກໂກດ

[໗໔] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນນະຣົກ ເໝືອນຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ມັກໂກດ ບໍ່ເຄົາລົບສັດທຳ
໒. ເປັນຜູ້ມັກລົບຫຼູ່ ບໍ່ເຄົາລົບສັດທຳ
໓. ເປັນຜູ້ເຫັນແກ່ລາບ ບໍ່ເຄົາລົບສັດທຳ
໔. ເປັນຜູ້ເຫັນແກ່ສັກກາຣະ ບໍ່ເຄົາລົບສັດທຳ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳຣົງຢູ່ໃນສະຫວັນ ເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ເຄົາລົບສັດທຳ ບໍ່ມັກໂກດ
໒. ເປັນຜູ້ເຄົາລົບສັດທຳ ບໍ່ມັກລົບຫຼູ່
໓. ເປັນຜູ້ເຄົາລົບສັດທຳ ບໍ່ເຫັນແກ່ລາບ
໔. ເປັນຜູ້ເຄົາລົບສັດທຳ ບໍ່ເຫັນແກ່ສັກກາຣະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳຣົງຢູ່ໃນ ສະຫວັນເໝືອນໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ໂກທະຄະຣຸສູດທີ ໔ ຈົບ**

# ໕. ຕະໂມຕະມະສູດ

## ວ່າດ້ວຍຜູ້ມືດມາແລະມືດໄປ

[໘໕] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ໌ ພວກໃດແດ່ ຄື

໑. ບຸກຄົນຜູ້ມືດມາແລະມືດໄປ
໒. ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ
໓. ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ
໔. ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ

ບຸກຄົນຜູ້ມືດມາແລະມືດໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນຊ່າງສານ ຕະກູນນາຍພານ ຕະກູນຊ່າງລົດ ຫຼືຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນຍາກຈົນ ມີເຂົ້າ ນ້ຳແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳຕ້ອຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບ ຫຼືເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແລະເຂົາຍັງປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ບຸກຄົນຜູ້ມືດມາແລະມືດໄປ ເປັນແນວນີ້ແລ

ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນຊ່າງສານ ຕະກູນນາຍພານ ຕະກູນຊ່າງລົດ ຫຼືຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນຍາກຈົນ ມີເຂົ້າ ນ້ຳແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳຕ້ອຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບ ຫຼືເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແຕ່ເຂົາປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວນີ້ແລ

ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຫຼືຕະກູນຄະຫະບໍດີມະຫາສານ[๑] ເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດ ຫຼວງຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຢ່າງຍິ່ງ ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແຕ່ເຂົາປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ເປັນແນວນີ້ແລ

ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຫຼືຕະກູນຄະຫະບໍດີມະຫາສານ ເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດ ຫຼວງຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຢ່າງຍິ່ງ ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແລະເຂົາກໍປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ຕະໂມຕະມະສູດທີ ໕ ຈົບ**

# ໖. ໂອນະໂຕນະຕະສູດ

## ວ່າດ້ວຍຜູ້ຕ່ຳມາແລະຕ່ຳໄປ

[๘໖] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ຕ່ຳມາແລະຕ່ຳໄປ
໒. ບຸກຄົນຜູ້ຕ່ຳມາແຕ່ສູງໄປ
໓. ບຸກຄົນຜູ້ສູງມາແຕ່ຕ່ຳໄປ
໔. ບຸກຄົນຜູ້ສູງມາແລະສູງໄປ

ບຸກຄົນຜູ້ຕ່ຳມາແລະຕ່ຳໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຯລຯ ແລະເຂົາຍັງປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຍ່ອມເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ບຸກຄົນຜູ້ຕ່ຳມາແລະຕ່ຳໄປ ເປັນແນວນີ້ແລ

ບຸກຄົນຜູ້ຕ່ຳມາແຕ່ສູງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດມາໃນຕະກູນຕ່ຳ ຄື ຕະກູນຈັນທານ ຯລຯ ແຕ່ເຂົາປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກ ສະຫວັນ ບຸກຄົນຜູ້ຕ່ຳມາແຕ່ສູງໄປ ເປັນແນວນີ້ແລ

ບຸກຄົນຜູ້ສູງມາແຕ່ຕ່ຳໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຯລຯ ແຕ່ເຂົາປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ບຸກຄົນຜູ້ສູງມາແຕ່ຕ່ຳໄປ ເປັນແນວນີ້ແລ

ບຸກຄົນຜູ້ສູງມາແລະສູງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຯລຯ ແລະເຂົາກໍປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິ ໂລກສະຫວັນ ບຸກຄົນຜູ້ສູງມາແລະສູງໄປ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ໂອນະໂຕນະຕະສູດທີ ໖ ຈົບ**

## ໗. ປຸດຕະສູດ

## ວ່າດ້ວຍສະມະນະຜູ້ບໍ່ຫວັ່ນໄຫວເໝືອນພຣະຣາດຊະໂອຣົດອົງອ້າຍ

[໘໗] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ

໔. ບຸກຄົນເປັນສະມະນະຄືດອກປຸນທະຣິກ (ບົວຂາວ)
໖. ບຸກຄົນເປັນສະມະນະຄືດອກປະທຸມ (ບົວຫຼວງ)
໔. ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນເສຂະ ດຳເນີນຕາມຂໍ້ປະຕິບັດ ປາຖະໜາຜົນທີ່ຍອດຢ້ຽມອັນເປັນແດນກະເສມຈາກໂຍຄະຢູ່ ເໝືອນພຣະຣາດຊະໂອລົດອົງອ້າຍຂອງພຣະຣາຊາມະຫາກະສັດຜູ້ໄດ້ຮັບມູດທາພິເສກແລ້ວ ແມ່ນຍັງບໍ່ໄດ້ຮັບການອະພິເສກກໍບໍ່ຊົງຫວັ່ນໄຫວ ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແຕ່ທ່ານບໍ່ໄດ້ສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແລະທ່ານໄດ້ສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວນີ້ແລ

ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີຄົນຂໍຮ້ອງທີ່ນັ້ນ ຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງສັນບິນທະບາດຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມສັນບິນທະບາດແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງໃຊ້ສອຍເສນາສະນະຫຼາຍ ບໍ່ມີໃຜຂໍຮ້ອງ ຍ່ອມໃຊ້ສອຍເສນາສະນະແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງບໍຣິໂພກຄິລານະປັດໄຈເພສັດບໍຣິຂານຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມບໍຣິໂພກຄິລານະປັດໄຈເພສັດບໍຣິຂານແຕ່ໜ້ອຍ ແລະເພື່ອນພົມມະຈາຣີທັງຫຼາຍທີ່ຢູ່ນຳກັນຍ່ອມສະແດງອອກທາງກາຍ ວາຈາ ແລະໃຈຕໍ່ທ່ານເປັນກິຣິຍາທີ່ໜ້າພໍໃຈເປັນສ່ວນຫຼາຍ ທີ່ບໍ່ໜ້າພໍໃຈເປັນສ່ວນໜ້ອຍ ນ້ອມນຳເຂົ້າໄປແຕ່ສິ່ງທີ່ໜ້າພໍໃຈ ທີ່ນັ້ນ ສິ່ງທີ່ບໍ່ໜ້າພໍໃຈມີໜ້ອຍ ເວທະນາທີ່ມີປິເປັນສະມຸດຖານກໍດີ ມີເສມຫະເປັນສະມຸດຖານກໍດີ ມີລົມເປັນສະມຸດຖານກໍດີ ເກີດເພາະສັນນິບາດກໍດີ ເກີດຍ້ອນລະດູແປຜັນກໍດີ ເກີດຍ້ອນການບໍລິຫານບໍ່ສະໝໍ່າສະເໝີກໍດີ ເກີດຍ້ອນຄວາມແກ່ກໍດີ ເກີດຍ້ອນຜົນກຳກໍດີ ສ່ວນຫຼາຍ ຍ່ອມບໍ່ເກີດແກ່ທ່ານ ທ່ານມີຄວາມເຈັບໄຂ້ໜ້ອຍ ຈຶ່ງເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນ ເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເຮັດໃຫ້ແຈ້ງ ເຈໂຕວິມຸດຕິ

ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງ ຢູ່ໃນປັດຈຸບັນ ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວນີ້ແລ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ ສະມະນະ" ບຸກຄົນນັ້ນ ເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງເຮົາວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" ຍ້ອນເຮົາມີຄົນຂໍຮ້ອງທີ່ນັ້ນຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງສັນບິນທະບາດຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມສັນບິນທະບາດແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງໃຊ້ສອຍເສນາສະນະຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍເສນາສະນະແຕ່ໜ້ອຍ ມີຄົນຂໍຮ້ອງທີ່ນັ້ນຈຶ່ງບໍຣິໂພກຄິລານະປັດໄຈເພສັດບໍຣິຂານຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມບໍຣິໂພກຄິລານະປັດໄຈເພສັດບໍຣິຂານແຕ່ໜ້ອຍ ແລະພວກພິກຂຸທີ່ຢູ່ນຳກັນຍ່ອມສະແດງອອກທາງກາຍ ວາຈາ ແລະໃຈຕໍ່ເຮົາເປັນກິຣິຍາທີ່ໜ້າພໍໃຈເປັນສ່ວນຫຼາຍ ທີ່ບໍ່ໜ້າພໍໃຈເປັນສ່ວນໜ້ອຍ ນ້ອມນຳເຂົ້າໄປແຕ່ສິ່ງທີ່ໜ້າພໍໃຈ ທີ່ນັ້ນ ສິ່ງທີ່ບໍ່ໜ້າພໍໃຈມີໜ້ອຍ ເວທະນາທີ່ມີປິເປັນສະມຸດຖານກໍດີ ມີເສມຫະເປັນສະມຸດຖານກໍດີ ມີລົມເປັນສະມຸດຖານກໍດີ ເກີດຍ້ອນສັນນິບາດກໍດີ ເກີດຍ້ອນລະດູແປຜັນກໍດີ ເກີດຍ້ອນການບໍລິຫານບໍ່ສະໝ່ຳສະເໝີກໍດີ ເກີດຍ້ອນຄວາມແກ່ກໍດີ ເກີດຍ້ອນຜົນກຳກໍດີ ສ່ວນຫຼາຍ ຍ່ອມບໍ່ເກີດແກ່ເຮົາ ເຮົາມີຄວາມເຈັບໄຂ້ໜ້ອຍຈຶ່ງເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" ບຸກຄົນນັ້ນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງເຮົານັ້ນແລວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ"

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ປຸດຕະສູດທີ ໗ ຈົບ**

## ໘. ສັງໂຍຊະນະສູດ

## ວ່າດ້ວຍຜູ້ໝົດສິ້ນສັງໂຍດ

[໘໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ
໒. ບຸກຄົນເປັນສະມະນະຄືດອກປຸນທະຣິກ
໓. ບຸກຄົນເປັນສະມະນະຄືດອກປະທຸມ
໔. ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນພຣະໂສດາບັນ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ຍ້ອນຣາຄະໂທສະ ແລະໂມຫະເບົາບາງ ມາສູ່ໂລກນີ້ອີກພຽງຄັ້ງດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນໂອປະປາຕິກະ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການ ສິ້ນໄປ ຈະປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວນີ້ແລ

ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ສັງໂຍຊະນະສູດທີ ໗ ຈົບ**

## ໘. ສຳມາທິດຖິສູດ

## ວ່າດ້ວຍຜູ້ເປັນສຳມາທິດຖິ

[໘໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ
໒. ບຸກຄົນເປັນສະມະນະຄືດອກປຸນທະຣິກ
໓. ບຸກຄົນເປັນສະມະນະຄືດອກປະທຸມ
໔. ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສຳມາທິດຖິ (ເຫັນຖືກ) ມີສຳມາສັງກັບປະ (ຄິດຖືກ) ມີສຳມາວາຈາ (ເຈຣະຈາຖືກ) ມີສຳມາກຳມັນຕະ (ການງານຖືກ) ມີສຳມາອາຊີວະ (ລ້ຽງຊີວິດຖືກ) ມີສຳມາວາຍາມະ (ພະຍາຍາມຖືກ) ມີສຳມາສະຕິ (ຣະນຶກຖືກ) ມີສຳມາສະມາທິ (ຕັ້ງຈິດໝັ້ນຖືກ) ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສຳມາທິດຖິ ມີສຳມາສັງກັບປະ ມີສຳມາວາຈາ ມີສຳມາກຳມັນຕະ ມີສຳມາອາຊີວະ ມີສຳມາວາຍາມະ ມີສຳມາສະຕິ ມີສຳມາສະມາທິ

ມີສຳມາຍານະ (ຮູ້ຖືກ) ມີສຳມາວິມຸດຕິ (ລຸດພົ້ນຖືກ) ແຕ່ທ່ານບໍ່ໄດ້ສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກຄົນເປັນສະມະນະຄືດອກບົວຂາວ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສຳມາທິດຖິ ຯລຯ ມີສຳມາຍານະ ມີສຳມາວິມຸດຕິ ແລະທ່ານສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວນີ້ແລ

ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີຄົນຂໍຮ້ອງທ່ານັ້ນຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ຯລຯ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" ບຸກຄົນນັ້ນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງເຮົາ ວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" (ຍ້ອນວ່າເຮົາມີຄົນຂໍຮ້ອງທ່ານັ້ນຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ຯລຯ)

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ສຳມາທິດຖິສູດທີ ໗ ຈົບ**

## ໑໐. ຂັນທະສູດ

### ວ່າດ້ວຍຜູ້ພິຈາລະນາເຫັນຄວາມເກີດແລະຄວາມດັບໃນອຸປາທານຂັນ

[໙໐] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ
໒. ບຸກຄົນເປັນສະມະນະຄືດອກປຸນທະຣິກ
໓. ບຸກຄົນເປັນສະມະນະຄືດອກປະທຸມ
໔. ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນເສຂະ ຍັງບໍ່ບັນລຸອະຣະຫັດຕະມັກ ປາຖະໜາຜົນທີ່ປະເສີດ ອັນເປັນແດນກະເສມຈາກໂຍຄະ ບຸກຄົນເປັນສະມະນະຜູ້ບໍ່ຫວັ່ນໄຫວ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປຸນທະຣິກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຄວາມເກີດ ແລະຄວາມດັບໃນອຸປາທານຂັນ ໕ ວ່າ "ຮູບເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນດັ່ງນີ້ ຄວາມດັບແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ຯລຯ ສັນຍາເປັນດັ່ງນີ້ ຯລຯ ສັງຂານເປັນດັ່ງນີ້ ຯລຯ ວິນຍານເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້" ແຕ່ທ່ານບໍ່ໄດ້ສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກ ຄົນ ເປັນສະມະນະຄືດອກປຸນທະຣິກ ເປັນແນວນີ້ແລ

ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຄວາມເກີດ ແລະຄວາມດັບໃນອຸປາທານຂັນ ໕ ວ່າ "ຮູບເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນດັ່ງນີ້ ຄວາມດັບແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ຯລຯ ສັນຍາເປັນດັ່ງນີ້ ຯລຯ ສັງຂານເປັນດັ່ງນີ້ ຯລຯ ວິນຍານເປັນດັ່ງນີ້ ຄວາມເກີດຂຶ້ນ

ແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້" ແລະທ່ານໄດ້ສຳຜັດວິໂມກ ໘ ດ້ວຍນາມກາຍຢູ່ ບຸກຄົນເປັນສະມະນະຄືດອກປະທຸມ ເປັນແນວນີ້ແລ

ບຸກຄົນເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີຄົນຂໍຮ້ອງທີ່ນັ້ນຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ຯລຯ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" ບຸກຄົນນັ້ນ ເມື່ອຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງເຮົານັ້ນແລວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ" ຍ້ອນວ່າເຮົາມີຄົນຂໍຮ້ອງທີ່ນັ້ນ ຈຶ່ງໃຊ້ສອຍຈີວອນຫຼາຍ ບໍ່ມີໃຜຂໍຮ້ອງຍ່ອມໃຊ້ສອຍຈີວອນແຕ່ໜ້ອຍ ຯລຯ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ຂັນທະສູດທີ ໑໐ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


| | |
|---|---|
| ໑. ປານາຕິປາຕະສູດ | ໒. ມຸສາວາທະສູດ |
| ໓. ອະວັນນາຣະຫະສູດ | ໔. ໂກທະຄະຣຸສູດ |
| ໕. ຕະໂມຕະມະສູດ | ໖. ໂອນະໂຕນະຕະສູດ |
| ໗. ປຸດຕະສູດ | ໘. ສັງໂຍຊະນະສູດ |
| ໙. ສຳມາທິດຖິສູດ | ໑໐. ຂັນທະສູດ |


# ໕. ອະສຸຣະວັກ

## ໝວດວ່າດ້ວຍບຸກຄົນຄືອະສູນແລະເທວະດາ

## ໑. ອະສຸຣະສູດ

### ວ່າດ້ວຍບຸກຄົນຄືອະສູນແລະເທວະດາ

[໙໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຄືອະສູນ ມີບໍລິວານຄືອະສູນ

໔. ບຸກຄົນຄືອະສູນ ມີບໍລິວານຄືເທວະດາ
໓. ບຸກຄົນຄືເທວະດາ ມີບໍລິວານຄືອະສູນ
໔. ບຸກຄົນຄືເທວະດາ ມີບໍລິວານຄືເທວະດາ

ບຸກຄົນຄືອະສູນ ມີບໍລິວານຄືອະສູນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ແມ່ນພວກພ້ອງຂອງເຂົາກໍເປັນຜູ້ທຸສີນ ມີທຳຊົ່ວຊາມ ບຸກຄົນຄືອະສູນ ມີບໍລິວານຄືອະສູນ ເປັນແນວນີ້ແລ

ບຸກຄົນຄືອະສູນ ມີບໍລິວານຄືເທວະດາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ແຕ່ພວກພ້ອງຂອງເຂົາເປັນຜູ້ມີສີນ ມີກັນລະຍານະທຳ ບຸກຄົນຄືອະສູນ ມີບໍລິວານຄືເທວະດາ ເປັນແນວນີ້ແລ

ບຸກຄົນຄືເທວະດາ ມີບໍລິວານຄືອະສູນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ແຕ່ພວກພ້ອງຂອງເຂົາເປັນຜູ້ ທຸສີນ ມີທຳຊົ່ວຊາມ ບຸກຄົນຄືເທວະດາ ມີບໍລິວານຄືອະສູນ ເປັນແນວນີ້ແລ

ບຸກຄົນຄືເທວະດາ ມີບໍລິວານຄືເທວະດາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ແມ່ນພວກພ້ອງຂອງເຂົາກໍເປັນຜູ້ມີສີນ ມີກັນລະຍານະທຳ ບຸກຄົນຄືເທວະດາ ມີບໍລິວານຄືເທວະດາ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ອະສຸຣະສູດທີ ໑ ຈົບ**

## ໔. ປະຖະມະສະມາທິສູດ

### ວ່າດ້ວຍສະມາທິ ສູດທີ ໑

[໙໔] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ
໒. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ
໓. ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະບໍ່ໄດ້ຄວາມເຫັນ ແຈ້ງທຳດ້ວຍປັນຍາອັນຍິ່ງ
໔. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ປະຖະມະສະມາທິສູດທີ ໒ ຈົບ**

# ໓. ທຸຕິຍະສະມາທິສູດ

# ວ່າດ້ວຍສະມາທິ ສູດທີ ໒

[໙໓] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ
໒. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ
໓. ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ
໔. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງ ທຳດ້ວຍປັນຍາອັນຍິ່ງ

ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ຄວນຕັ້ງໝັ້ນໃນຄວາມສະງົບແຫ່ງຈິດພາຍໃນ ແລ້ວທຳຄວາມພຽນເພື່ອຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມສະງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ຄວນຕັ້ງໝັ້ນໃນຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແລ້ວທຳຄວາມພຽນເພື່ອຄວາມສະງົບແຫ່ງຈິດພາຍໃນ ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແລະໄດ້ຄວາມສະງົບແຫ່ງຈິດພາຍໃນ

ບຸກຄົນຜູ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອໄດ້ກຸສົນທຳເຫຼົ່ານັ້ນເທີ້ນ ບຸກຄົນນັ້ນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ ກຸສົນທຳເຫຼົ່ານັ້ນ ປຽບຄືບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼື ມີຫົວທີ່ຖືກໄຟໄໝ້ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ທຍໍ້ທໍ້ໃຫ້ມີປະມານຍິ່ງ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອດັບໄຟທີ່ໄໝ້ຜ້າ ຫຼື ໄຟທີ່ໄໝ້ຫົວນັ້ນ ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ຄວນຕັ້ງຢູ່ໃນກຸສົນທຳເຫຼົ່ານັ້ນແລ້ວທຳຄວາມພຽນ ເພື່ອຄວາມໝົດສິ້ນໄປແຫ່ງອາສະວະໃຫ້ຍິ່ງຂຶ້ນໄປ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ມີຢາກົດຢູ່ໃນໂລກ

**ທຸຕິຍະສະມາທິສູດທີ ໓ ຈົບ**

## ໔. ຕະຕິຍະສະມາທິສູດ

## ວ່າດ້ວຍສະມາທິ ສູດທີ ໓

[໙໔] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຢາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ
໒. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ

໓. ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ຄວາມສະຫງົບແຫ່ງຈິດພາຍໃນ ແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ
໔. ບຸກຄົນລາງຄົນໃນໂລກນີ້ໄດ້ຄວາມສະຫງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ໄດ້ຄວາມສະຫງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເພິ່ງເຂົ້າໄປຫາບຸກຄົນຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ຮຽນຖາມແນວນີ້ວ່າ “ທ່ານຜູ້ມີອາຍຸ ເພິ່ງແນມສັງຂານແນວໃດ ພິຈາລະນາສັງຂານແນວໃດ ເຫັນແຈ້ງສັງຂານແນວໃດ” ບຸກຄົນຜູ້ຖືກຖາມນັ້ນ ຍ່ອມຕອບເຂົາຕາມທີ່ເຫັນຕາມທີ່ຮູ້ວ່າ “ທ່ານຜູ້ມີອາຍຸ ເພິ່ງແນມສັງຂານແນວນີ້ ພິຈາລະນາສັງຂານແນວນີ້ ເຫັນແຈ້ງສັງຂານແນວນີ້” ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມສະຫງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະຫງົບແຫ່ງຈິດພາຍໃນ ເພິ່ງເຂົ້າໄປຫາບຸກຄົນຜູ້ໄດ້ຄວາມສະຫງົບແຫ່ງຈິດພາຍໃນ ຮຽນຖາມແນວນີ້ວ່າ “ທ່ານຜູ້ມີອາຍຸ ເພິ່ງຕັ້ງຈິດໄວ້ແນວໃດ ນ້ອມຈິດໄປແນວໃດ ເຮັດຈິດໃຫ້ມີອາລົມເປັນໜຶ່ງຜຸດຂຶ້ນແນວໃດ ຊັກຈູງຈິດໃຫ້ເປັນສະມາທິໄດ້ແນວໃດ” ບຸກຄົນຜູ້ຖືກຖາມນັ້ນ ຍ່ອມຕອບເຂົາຕາມທີ່ເຫັນຕາມທີ່ຮູ້ວ່າ “ທ່ານຜູ້ມີອາຍຸ ເພິ່ງຕັ້ງຈິດໄວ້ແນວນີ້ ນ້ອມຈິດໄປແນວນີ້ ເຮັດຈິດໃຫ້ມີອາລົມເປັນໜຶ່ງຜຸດຂຶ້ນແນວນີ້ ຊັກຈູງຈິດໃຫ້ເປັນສະມາທິແນວນີ້” ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແລະໄດ້ຄວາມສະຫງົບແຫ່ງຈິດພາຍໃນ

ບຸກຄົນຜູ້ບໍ່ໄດ້ຄວາມສະຫງົບແຫ່ງຈິດພາຍໃນແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເພິ່ງເຂົ້າໄປຫາບຸກຄົນຜູ້ໄດ້ຄວາມສະຫງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳ ດ້ວຍປັນຍາອັນຍິ່ງ ຮຽນຖາມແນວນີ້ວ່າ “ທ່ານຜູ້ມີອາຍຸ ເພິ່ງຕັ້ງຈິດໄວ້ແນວໃດ ນ້ອມຈິດໄປແນວໃດ ເຮັດຈິດໃຫ້ມີອາລົມເປັນໜຶ່ງຜຸດຂຶ້ນແນວໃດ ຊັກຈູງຈິດໃຫ້ເປັນສະມາທິໄດ້ແນວໃດ ເພິ່ງແນມສັງຂານແນວໃດ ພິຈາລະນາສັງຂານແນວໃດ ເຫັນແຈ້ງສັງຂານແນວໃດ” ບຸກຄົນຜູ້ຖືກຖາມນັ້ນ ຍ່ອມຕອບເຂົາຕາມທີ່ເຫັນຕາມທີ່ຮູ້ວ່າ “ທ່ານຜູ້ມີອາຍຸ ເພິ່ງຕັ້ງຈິດໄວ້ແນວນີ້ ນ້ອມຈິດໄປແນວນີ້ ເຮັດຈິດໃຫ້ມີອາລົມເປັນ ໜຶ່ງຜຸດຂຶ້ນແນວນີ້ ຊັກຈູງຈິດໃຫ້ເປັນສະມາທິແນວນີ້ ເພິ່ງແນມສັງຂານແນວນີ້ ພິຈາລະນາສັງຂານແນວນີ້ ເຫັນແຈ້ງສັງຂານແນວນີ້” ສະໄໝຕໍ່ມາ ບຸກຄົນນັ້ນຈຶ່ງໄດ້ຄວາມສະຫງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ໄດ້ຄວາມສະຫງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ຄວນຕັ້ງຢູ່ໃນກຸສົນທຳເຫຼົ່ານັ້ນແລ້ວເຮັດຄວາມພຽນເພື່ອຄວາມໝົດສິ້ນໄປແຫ່ງອາສະວະໃຫ້ຍິ່ງຂຶ້ນໄປ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ຕະຕິຍະສະມາທິສູດທີ ໔ ຈົບ**

## ໕. ສະວາລາຕະສູດ

## ວ່າດ້ວຍບຸກຄົນປຽບຄືທ່ອນໄມ້ທີ່ຖືກຖິ້ມໄວ້ໃນປ່າຊ້າ

[໙໕] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ
໓. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເຮົາຮຽກວ່າ ເປັນຄືໄມ້ຄ້ອນທີ່ຖືກຖິ້ມໄວ້ໃນປ່າຊ້າ ໄຟໄໝ້ທັງສອງຂ້າງ ທາງກາງເປື້ອນຄູດ ຍ່ອມບໍ່ອຳນວຍປະໂຫຍດເປັນເຄື່ອງເຮືອນ[๑] ທັງບໍ່ອຳນວຍປະໂຫຍດເປັນອຸປະກອນໃນປ່າ[๒]

ໃນບຸກຄົນ ໒ ຈຳພວກທຳອິດຂອງບຸກຄົນ ໔ ຈຳພວກເຫຼົ່ານັ້ນຂ້າງຕົ້ນນີ້ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງງາມກວ່າແລະປະນີດກວ່າ

ໃນບຸກຄົນ ໓ ຈຳພວກທຳອິດ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນງາມກວ່າແລະປະນີດກວ່າ

ໃນບຸກຄົນ ໔ ຈຳພວກ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນເລີດ ປະເສີດທີ່ສຸດ ເປັນປະທານ ສູງສຸດ ຍິ່ງໃຫຍ່ທີ່ສຸດ

ປຽບຄືນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ[๑] ຍອດເນີຍໃສ ຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ສັນໃດ

ບັນດາບຸກຄົນ ໔ ຈຳພວກນີ້ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນເປັນເລີດ ປະເສີດສຸດ ເປັນປະທານ ສູງສຸດ ຍິ່ງໃຫຍ່ທີ່ສຸດ ສັນນັ້ນ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ສະວາລາຕະສູດທີ ໕ ຈົບ**

# ໖. ຣາຄະວິນຍະສູດ

## ວ່າດ້ວຍບຸກຄົນຜູ້ປະຕິບັດເພື່ອກຳຈັດຣາຄະ

[໙໖] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ
໓. ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດຣາຄະ ແຕ່ບໍ່ຊັກຊວນຜູ້ອື່ນເພື່ອກຳຈັດຣາຄະ ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດໂທສະ ແຕ່ບໍ່ຊັກຊວນຜູ້ອື່ນເພື່ອກຳຈັດໂທສະ ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດໂມຫະ ແຕ່ບໍ່ຊັກຊວນຜູ້ອື່ນເພື່ອກຳຈັດໂມຫະ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດຣາຄະ ແຕ່ຊັກຊວນຜູ້ອື່ນເພື່ອກຳຈັດຣາຄະ ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດໂທສະ ແຕ່ຊັກຊວນຜູ້ອື່ນເພື່ອກຳຈັດໂທສະ ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດໂມຫະ ແຕ່ຊັກຊວນຜູ້ອື່ນເພື່ອກຳຈັດໂມຫະ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດຣາຄະແລະບໍ່ຊັກຊວນຜູ້ອື່ນເພື່ອກຳຈັດຣາຄະ ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດໂທສະແລະບໍ່ຊັກຊວນຜູ້ອື່ນເພື່ອກຳຈັດ

ໂທສະ ຕົນເອງເປັນຜູ້ບໍ່ປະຕິບັດເພື່ອກຳຈັດໂມຫະແລະບໍ່ຊັກຊວນຜູ້ອື່ນເພື່ອກຳຈັດໂມຫະ ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດຣາຄະ ແລະຊັກຊວນຜູ້ອື່ນເພື່ອກຳຈັດຣາຄະ ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດໂທສະແລະຊັກຊວນຜູ້ອື່ນເພື່ອກຳຈັດໂທສະ ຕົນເອງເປັນຜູ້ປະຕິບັດເພື່ອກຳຈັດໂມຫະແລະຊັກຊວນຜູ້ອື່ນເພື່ອກຳຈັດໂມຫະ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ຣາຄະວິນຍະສູດທີ ໖ ຈົບ**

## ໗. ຂິບປະນິສັນຕິສູດ

## ວ່າດ້ວຍບຸກຄົນຜູ້ຮູ້ໄດ້ໄວ

[໑໗] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ[໑] ພວກໃດແດ່ ຄື

໑. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ
໓. ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ສາມາດຮູ້ໄດ້ໄວໃນກຸສົນທຳທັງຫຼາຍ ຊົງຈຳທຳທີ່ຟັງແລ້ວຈື່ໄວ້ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ[໑] ແຕ່ບໍ່ມີວາຈາງາມ ບໍ່ເຈຣະຈາຄຳເວົ້າມ່ວນ ອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ສາມາດຮູ້ໄດ້ໄວໃນກຸສົນທຳທັງຫຼາຍ ບໍ່ຊົງຈຳທຳທີ່ຟັງແລ້ວໄວ້ ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ບໍ່ຮູ້ອັດຖະ ບໍ່ຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແຕ່ມີວາຈາງາມ ເຈຣະຈາຄຳເວົ້າອ່ອນຫວານ ອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ທັງຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ສາມາດຮູ້ໄດ້ໄວໃນກຸສົນທຳທັງຫຼາຍ ບໍ່ຊົງຈຳທຳທີ່ຟັງແລ້ວໄວ້ ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ບໍ່ຮູ້ອັດຖະ ບໍ່ຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແລະບໍ່ມີວາຈາງາມ ບໍ່ເຈຣະຈາຄຳເວົ້າມ່ວນ ອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສ ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ສາມາດຮູ້ໄດ້ໄວໃນກຸສົນທຳທັງຫຼາຍ ຊົງຈຳທຳທີ່ຟັງແລ້ວໄວ້ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແລະມີວາຈາງາມ ເຈຣະຈາຄຳເວົ້າມ່ວນ ອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ທັງຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ຂິບປະນິສັນຕິສູດທີ ໗ ຈົບ**

# ๗. ອັດຕະຫິຕະສູດ

## ວ່າດ້ວຍບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ

[໘໗] ພິກຂຸທັງຫຼາຍ ບຸກຄົນ ໔ ຈໍາພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈໍາພວກໃດແດ່ ຄື

໑. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ
໓. ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ພິກຂຸທັງຫຼາຍ ບຸກຄົນ ໔ ຈໍາພວກນີ້ແລມີຜາກົດຢູ່ໃນໂລກ

**ອັດຕະຫິຕະສູດທີ ໗ ຈົບ**

# ໘. ສິກຂາປະທະສູດ

## ວ່າດ້ວຍສິກຂາບົດເປັນເຫດໃຫ້ເກື້ອກູນແລະບໍ່ເກື້ອກູນ

[໘໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈໍາພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈໍາພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ
໓. ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ເວັ້ນຂາດຈາກການຂ້າສັດ ແຕ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ฯລฯ ຕົນເອງເປັນຜູ້ບໍ່ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແຕ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ເວັ້ນຂາດຈາກການຂ້າສັດແລະບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ฯລฯ ຕົນເອງເປັນຜູ້ບໍ່ເວັ້ນຂາດຈາກການເສບຂອງມຶນເມົາ ຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແລະບໍ່ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມແລະ ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເສບຂອງ

ມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ສິກຂາປະທະສູດທີ ໙ ຈົບ**

## ໑໐. ໂປຕະລິຍະສູດ

## ວ່າດ້ວຍປະຣິພາຊົກຊື່ໂປຕະລິຍະ

[໑໐໐] ສະໄໝນັ້ນແລ ປະຣິພາຊົກຊື່ໂປຕະລິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ກັບໂປຕະລິຍະປະຣິພາຊົກດັ່ງນີ້ວ່າ

"ໂປຕະລິຍະ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ
໒. ບຸກຄົນລາງຄົນໃນໂລກນີ້ ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ
໓. ບຸກຄົນລາງຄົນໃນໂລກນີ້ ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ
໔. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ

ໂປຕະລິຍະ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ໂປຕະລິຍະ ບັນດາບຸກຄົນ ໔ ຈຳພວກນີ້ ທ່ານຖືກໃຈບຸກຄົນຈຳພວກໃດວ່າງາມກວ່າ ແລະ ປະນີດກວ່າ"

ໂປຕະລິຍປະຣິພາຊົກຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ[໑]ໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ
໒. ບຸກຄົນລາງຄົນໃນໂລກນີ້ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ
໓. ບຸກຄົນລາງຄົນໃນໂລກນີ້ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ
໔. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ

ຂ້າແດ່ທ່ານພຣະໂຄດົມ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບັນດາບຸກຄົນ ໔ ຈຳພວກນີ້ ຂ້າພຣະອົງພໍໃຈບຸກຄົນຜູ້ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການນີ້ ເປັນຜູ້ງາມກວ່າແລະປະນີດກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນອຸເປກຂານີ້ເປັນທຳທີ່ງົດງາມຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ "ໂປຕະລິຍະ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຯລຯ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ໔ ຈຳພວກນີ້ ບຸກຄົນຜູ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການນີ້ ເປັນຜູ້ງາມກວ່າແລະປະນີດກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທຳຄືຄວາມເປັນຜູ້ຮູ້ຈັກການນີ້ງົດງາມຫຼາຍ"

ໂປຕະລິຍະປະຣິພາຊົກຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ[໑] ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ
໒. ບຸກຄົນລາງຄົນໃນໂລກນີ້ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ ແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ
໓. ບຸກຄົນລາງຄົນໃນໂລກນີ້ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ

໔. ບຸກຄົນລາງຄົນໃນໂລກນີ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການ

ຂ້າແດ່ທ່ານພຣະໂຄດົມ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ
ຂ້າແດ່ທ່ານພຣະໂຄດົມ ບັນດາບຸກຄົນ ໔ ຈຳພວກນີ້ ຂ້າພຣະອົງພໍໃຈບຸກຄົນ
ຜູ້ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການ ແລະກ່າວສັນເສີນ
ຜູ້ຄວນສັນເສີນຕາມຄວາມເປັນຈິງ ເໝາະແກ່ການນີ້ ເປັນຜູ້ງາມກວ່າແລະປະນີດກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທຳຄືຄວາມເປັນຜູ້ຮູ້ຈັກການນີ້ງົດງາມຫຼາຍ

ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໄວ້ໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ໂປຕະລິຍະສູດທີ ໑໐ ຈົບ**

**ອະສຸຣະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະສຸຣະສູດ
໒. ທຸຕິຍະສະມາທິສູດ
໕. ສະວາລາຕະສູດ
໗. ຂິບປະນິສັນຕິສູດ
໙. ສິກຂາປະທະສູດ
໔. ປະຖະມະສະມາທິສູດ
໔. ຕະຕິຍະສະມາທິສູດ
໖. ຣາຄະວິນຍະສູດ
໘. ອັດຕະທິຕະສູດ
໑໐. ໂປຕະລິຍະສູດ

**ທຸຕິຍະປັນນາດ ຈົບ**

# ໓. ຕະຕິຍະປັນນາດ

## ໑. ວະລາຫະກະວັກ

## ໝວດວ່າດ້ວຍບຸກຄົນປຽບຄືກ້ອນເຝື້ອ

### ໑. ປະຖະມະວະລາຫະກະສູດ

### ວ່າດ້ວຍບຸກຄົນປຽບຄືກ້ອນເຝື້ອ ສູດທີ ໑

[໑໐໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ກ້ອນເຝື້ອ ໔ ຊະນິດນີ້

ກ້ອນເຝື້ອ ໔ ຊະນິດ[១] ອັນໃດແດ່ ຄື

໑. ກ້ອນເຝື້ອທີ່ຄຳຣາມ ແຕ່ບໍ່ໃຫ້ຝົນຕົກ
໒. ກ້ອນເຝື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ
໓. ກ້ອນເຝື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ
໔. ກ້ອນເຝື້ອທີ່ຄຳຣາມແລະໃຫ້ຝົນຕົກ

ພິກຂຸທັງຫຼາຍ ກ້ອນເຝື້ອ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືກ້ອນເຝື້ອ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນປຽບຄືກ້ອນເຝື້ອທີ່ຄຳຣາມ ແຕ່ບໍ່ໃຫ້ຝົນຕົກ
໒. ບຸກຄົນປຽບຄືກ້ອນເຝື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ
໓. ບຸກຄົນປຽບຄືກ້ອນເຝື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ

໔. ບຸກຄົນປຽບຄືກ້ອນເພື້ອທີ່ຄໍາຣາມແລະໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ຄໍາຣາມ ແຕ່ບໍ່ໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມັກເວົ້າ ແຕ່ບໍ່ເຮັດ ບຸກຄົນປຽບຄືກ້ອນເພື້ອທີ່ຄໍາຣາມ ແຕ່ບໍ່ໃຫ້ຝົນຕົກເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ຄໍາຣາມ ແຕ່ບໍ່ໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄໍາຣາມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມັກເຮັດ ແຕ່ບໍ່ເວົ້າ ບຸກຄົນປຽບຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄໍາຣາມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄໍາຣາມ

ບຸກຄົນປຽບຄືກ້ອນເພື້ອທີ່ບໍ່ຄໍາຣາມແລະບໍ່ໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ເວົ້າແລະບໍ່ເຮັດ ບຸກຄົນປຽບຄືກ້ອນເພື້ອທີ່ບໍ່ຄໍາຣາມ ແລະບໍ່ໃຫ້ຝົນຕົກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ບໍ່ຄໍາຣາມ ແລະບໍ່ໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ຄໍາຣາມແລະໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມັກເວົ້າແລະມັກເຮັດ ບຸກຄົນປຽບຄືກ້ອນເພື້ອທີ່ຄໍາຣາມແລະໃຫ້ຝົນຕົກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ຄໍາຣາມ ແລະໃຫ້ຝົນຕົກ

ພິກຂຸທັງຫຼາຍ ບຸກຄົນປຽບຄືກ້ອນເພື້ອ ໔ ຈໍາພວກນີ້ແລມີຜາກົດຢູ່ໃນໂລກ

**ປະຖົມວະລາຫະກະສູດທີ ໑ ຈົບ**

## ໘. ທຸຕິຍະວະລາຫະກະສູດ

## ວ່າດ້ວຍບຸກຄົນປຽບຄືກ້ອນເພື້ອ ສູດທີ ໘

[໑໐໘] ພິກຂຸທັງຫຼາຍ ກ້ອນເພື້ອ ໔ ຊະນິດນີ້

ກ້ອນເພື້ອ ໔ ຊະນິດ ອັນໃດແດ່ ຄື

໑. ກ້ອນເພື້ອທີ່ຄໍາຣາມ ແຕ່ບໍ່ໃຫ້ຝົນຕົກ

໒. ກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ
໓. ກ້ອນເພື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ
໔. ກ້ອນເພື້ອທີ່ຄຳຣາມແລະໃຫ້ຝົນຕົກ

ພິກຂຸທັງຫຼາຍ ກ້ອນເພື້ອ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືກ້ອນເພື້ອ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມ ແຕ່ບໍ່ໃຫ້ຝົນຕົກ
໒. ບຸກຄົນປຽບຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ
໓. ບຸກຄົນປຽບຄືກ້ອນເພື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ
໔. ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມແລະໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມ ແຕ່ບໍ່ໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມ ແຕ່ບໍ່ໃຫ້ ຝົນຕົກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ຄຳຣາມ ແຕ່ບໍ່ໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ໃຫ້ຝົນຕົກ ແຕ່ບໍ່ຄຳຣາມ

ບຸກຄົນປຽບຄືກ້ອນເພື້ອທີ່ບໍ່ຄຳຣາມ ແລະບໍ່ໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງ

ວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືກ້ອນເພື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ບໍ່ຄຳຣາມແລະບໍ່ໃຫ້ຝົນຕົກ

ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມແລະໃຫ້ຝົນຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົ້າຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືກ້ອນເພື້ອທີ່ຄຳຣາມແລະໃຫ້ຝົນຕົກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືກ້ອນເພື້ອທີ່ຄຳຣາມແລະໃຫ້ຝົນຕົກ

ພິກຂຸທັງຫຼາຍ ບຸກຄົນປຽບຄືກ້ອນເພື້ອ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ທຸຕິຍະວະລາຫະກະສູດທີ ໘ ຈົບ**

## ໙. ກຸມພະສູດ

## ວ່າດ້ວຍບຸກຄົນປຽບຄືໝໍ້

[໑໐໓] ພິກຂຸທັງຫຼາຍ ໝໍ້ ໔ ຊະນິດນີ້

ໝໍ້ ໔ ຊະນິດ໌ ອັນໃດແດ່ ຄື

໑. ໝໍ້ເປົ່າແຕ່ອັດຝາ
໒. ໝໍ້ເຕັມແຕ່ໄຂຝາ
໓. ໝໍ້ເປົ່າແລະໄຂຝາ
໔. ໝໍ້ເຕັມແລະອັດຝາ

ພິກຂຸທັງຫຼາຍ ໝໍ້ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືໝໍ້ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ໌ ພວກໃດແດ່ ຄື

໑. ບຸກຄົນປຽບຄືໝໍ້ເປົ່າແຕ່ອັດຝາ
໒. ບຸກຄົນປຽບຄືໝໍ້ເຕັມແຕ່ໄຂຝາ
໓. ບຸກຄົນປຽບຄືໝໍ້ເປົ່າແລະໄຂຝາ
໔. ບຸກຄົນປຽບຄືໝໍ້ເຕັມແລະອັດຝາ

ບຸກຄົນປຽບຄືໝໍ້ເປົ່າແຕ່ອັດຝາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝໍ້ເປົ່າແຕ່ອັດຝາ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືໝໍ້ເປົ່າແຕ່ອັດຝາ

ບຸກຄົນປຽບຄືໝໍ້ເຕັມແຕ່ໄຂຝາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝໍ້ເຕັມແຕ່ໄຂຝາ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໝໍ້ເຕັມແຕ່ໄຂຝາ

ບຸກຄົນປຽບຄືໝໍ້ເປົ່າແລະໄຂຝາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝໍ້ເປົ່າແລະໄຂຝາ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໝໍ້ເປົ່າແລະໄຂຝາ

ບຸກຄົນປຽບຄືໝໍ້ເຕັມແລະອັດຝາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝໍ້ເຕັມແລະອັດຝາ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໝໍ້ເຕັມແລະອັດຝາ

ພິກຂຸທັງຫຼາຍ ບຸກຄົນປຽບຄືໝໍ້ ໔ ຈຳພວກນີ້ແລມີຢາກົດຢູ່ໃນໂລກ

**ກຸມພະສູດທີ ໓ ຈົບ**

## ໔. ອຸທະກະຣະຫະທະສູດ

## ວ່າດ້ວຍບຸກຄົນປຽບຄືຫ້ວງນ້ຳ

[໑໐໔] [໑໐໔] ພິກຂຸທັງຫຼາຍ ແມ່ນ້ຳ ໔ ຊະນິດນີ້

ແມ່ນ້ຳ ໔ ຊະນິດ໑ ອັນໃດແດ່ ຄື

໑. ແມ່ນ້ຳຕື້ນແຕ່ເງົາເລິກ
໒. ແມ່ນ້ຳເລິກແຕ່ເງົາຕື້ນ
໓. ແມ່ນ້ຳຕື້ນແລະເງົາຕື້ນ
໔. ແມ່ນ້ຳເລິກແລະເງົາເລິກ

ພິກຂຸທັງຫຼາຍ ແມ່ນ້ຳ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືແມ່ນ້ຳ ໔ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ[໑] ພວກໃດແດ່ ຄື

໑. ບຸກຄົນປຽບຄືແມ່ນ້ຳຕື້ນແຕ່ເງົາເລິກ
໒. ບຸກຄົນປຽບຄືແມ່ນ້ຳເລິກແຕ່ເງົາຕື້ນ
໓. ບຸກຄົນປຽບຄືແມ່ນ້ຳຕື້ນແລະເງົາຕື້ນ
໔. ບຸກຄົນປຽບຄືແມ່ນ້ຳເລິກແລະເງົາເລິກ

ບຸກຄົນປຽບຄືແມ່ນ້ຳຕື້ນແຕ່ເງົາເລິກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືແມ່ນ້ຳຕື້ນແຕ່ເງົາເລິກ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືແມ່ນ້ຳຕື້ນແຕ່ເງົາເລິກ

ບຸກຄົນປຽບຄືແມ່ນ້ຳເລິກແຕ່ເງົາຕື້ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີ

ປະຕິປະທາ" ບຸກຄົນປຽບຄືແມ່ນ້ຳເລິກແຕ່ເງົາຕື້ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືແມ່ນ້ຳເລິກແຕ່ເງົາຕື້ນ

ບຸກຄົນປຽບຄືແມ່ນ້ຳຕື້ນແລະເງົາຕື້ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືແມ່ນ້ຳຕື້ນແລະເງົາຕື້ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືແມ່ນ້ຳຕື້ນແລະເງົາຕື້ນ

ບຸກຄົນປຽບຄືແມ່ນ້ຳເລິກແລະເງົາເລິກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄືແມ່ນ້ຳເລິກແລະເງົາເລິກ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືແມ່ນ້ຳເລິກແລະເງົາເລິກ

ພິກຂຸທັງຫຼາຍ ບຸກຄົນປຽບຄືແມ່ນ້ຳ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ອຸທະກະຣະຫະທະສູດທີ ໔ ຈົບ**

## ໕. ອຳພະສູດ

## ວ່າດ້ວຍບຸກຄົນປຽບຄືໝາກມ່ວງ

[໑໐໕] ພິກຂຸທັງຫຼາຍ ໝາກມ່ວງ ໔ ຊະນິດນີ້

ໝາກມ່ວງ ໔ ຊະນິດ[១] ອັນໃດແດ່ ຄື

໑. ໝາກມ່ວງດິບແຕ່ຜິວສຸກ
໒. ໝາກມ່ວງສຸກແຕ່ຜິວດິບ
໓. ໝາກມ່ວງດິບແລະຜິວດິບ
໔. ໝາກມ່ວງສຸກແລະຜິວສຸກ

ພິກຂຸທັງຫຼາຍ ໝາກມ່ວງ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືໝາກມ່ວງ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ[១] ພວກໃດແດ່ ຄື

໑. ບຸກຄົນປຽບຄືໝາກມ່ວງດິບແຕ່ຜິວສຸກ
໒. ບຸກຄົນປຽບຄືໝາກມ່ວງສຸກແຕ່ຜິວດິບ
໓. ບຸກຄົນປຽບຄືໝາກມ່ວງດິບແລະຜິວດິບ
໔. ບຸກຄົນປຽບຄືໝາກມ່ວງສຸກແລະຜິວສຸກ

ບຸກຄົນປຽບຄືໝາກມ່ວງດິບແຕ່ຜິວສຸກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝາກມ່ວງດິບແຕ່ຜິວສຸກ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໝາກມ່ວງດິບແຕ່ຜິວສຸກ

ບຸກຄົນປຽບຄືໝາກມ່ວງສຸກແຕ່ຜິວດິບ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝາກມ່ວງສຸກແລະຜິວດິບ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືໝາກມ່ວງສຸກແຕ່ຜິວດິບ

ບຸກຄົນປຽບຄືໝາກມ່ວງດິບແລະຜິວດິບ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝາກມ່ວງດິບແລະຜິວດິບ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືໝາກມ່ວງດິບແລະຜິວດິບ

ບຸກຄົນປຽບຄືໝາກມ່ວງສຸກແລະຜິວສຸກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບຸກຄົນປຽບຄືໝາກມ່ວງສຸກແລະຜິວສຸກ ເປັນແບວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄືໝາກມ່ວງສຸກແລະຜິວສຸກ

ພິກຂຸທັງຫຼາຍ ບຸກຄົນປຽບຄືໝາກມ່ວງ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ອຳພະສູດທີ ໕ ຈົບ**

໖. ( )໑

# ກ. ມູສິກະສູດ

## ວ່າດ້ວຍບຸກຄົນປຽບຄືໜູ

[໑໐໗] ພິກຂຸທັງຫຼາຍ ໜູ ໔ ຊະນິດນີ້

ໜູ ໔ ຊະນິດ ອັນໃດແດ່ ຄື

໑. ໜູຂຸດຮູແຕ່ບໍ່ຢູ່
໒. ໜູຢູ່ແຕ່ບໍ່ຂຸດຮູ
໓. ໜູບໍ່ຂຸດຮູແລະບໍ່ຢູ່
໔. ໜູຂຸດຮູແລະຢູ່

ພິກຂຸທັງຫຼາຍ ໜູ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືໜູ ໔ ຈຳພວກມີຜາກົດ ຢູ່ໃນໂລກ

ບຸກຄົນ ໔ ຈຳພວກ໌ ພວກໃດແດ່ ຄື

໑. ບຸກຄົນປຽບຄື ໜູຂຸດຮູແຕ່ບໍ່ຢູ່
໒. ບຸກຄົນປຽບຄື ໜູຢູ່ແຕ່ບໍ່ຂຸດຮູ
໓. ບຸກຄົນປຽບຄື ໜູບໍ່ຂຸດຮູແລະບໍ່ຢູ່
໔. ບຸກຄົນປຽບຄື ໜູຂຸດຮູແລະຢູ່

ບຸກຄົນປຽບຄືໜູຂຸດຮູແຕ່ບໍ່ຢູ່ ເປັນແບວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄື ໜູຂຸດຮູແຕ່ບໍ່ຢູ່ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໜູຂຸດຮູແຕ່ບໍ່ຢູ່

ບຸກຄົນປຽບຄືໜູຢູ່ແຕ່ບໍ່ຂຸດຮູ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄື ໜູຢູ່ແຕ່ບໍ່ຂຸດຮູ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໜູຢູ່ແຕ່ບໍ່ຂຸດຮູ

ບຸກຄົນປຽບຄືໜູບໍ່ຂຸດຮູແລະບໍ່ຢູ່ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົາບໍ່ຮູ້ແຈ້ງຕາມຄວາມເປັນຈິງ ວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນ ປຽບຄືໜູບໍ່ຂຸດຮູແລະບໍ່ຢູ່ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄື

ໜູບໍ່ຂຸດຮູແລະບໍ່ຢູ່

ບຸກຄົນປຽບຄືໜູຂຸດຮູແລະຢູ່ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົາຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ບຸກຄົນປຽບຄື ໜູຂຸດຮູແລະຢູ່ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືໜູຂຸດຮູແລະຢູ່

ພິກຂຸທັງຫຼາຍ ບຸກຄົນປຽບຄືໜູ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ມູສິກະສູດທີ ໗ ຈົບ**

## ๗. ພະລິວັດທະສູດ

## ວ່າດ້ວຍບຸກຄົນປຽບຄືງົວເຖິກ

[໑໐๗] ພິກຂຸທັງຫຼາຍ ງົວເຖິກ ໔ ຊະນິດນີ້

ງົວເຖິກ ໔ ຊະນິດ ອັນໃດແດ່ ຄື

໑. ງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແຕ່ບໍ່ຂົ່ມເຫັງງົວຝູງອື່ນ
໒. ງົວເຖິກທີ່ຂົ່ມເຫັງງົວຝູງອື່ນ ແຕ່ບໍ່ຂົ່ມເຫັງງົວຝູງຕົນ
໓. ງົວເຖິກທີ່ຂົ່ມເຫັງງົວຝູງຕົນແລະຂົ່ມເຫັງງົວຝູງອື່ນ
໔. ງົວເຖິກທີ່ບໍ່ຂົ່ມເຫັງງົວຝູງຕົນແລະບໍ່ຂົ່ມເຫັງງົວຝູງອື່ນ

ພິກຂຸທັງຫຼາຍ ງົວເຖິກ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືງົວເຖິກ ໔ ຈຳພວກມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແຕ່ບໍ່ຂົ່ມເຫັງງົວຝູງອື່ນ
໒. ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງອື່ນ ແຕ່ບໍ່ຂົ່ມເຫັງງົວຝູງຕົນ
໓. ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນແລະຂົ່ມເຫັງງົວຝູງອື່ນ
໔. ບຸກຄົນປຽບຄືງົວເຖິກທີ່ບໍ່ຂົ່ມເຫັງງົວຝູງຕົນແລະບໍ່ຂົ່ມເຫັງງົວຝູງອື່ນ

ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແຕ່ບໍ່ຂົ່ມເຫັງງົວຝູງອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຮັດໃຫ້ຊົນໃນບໍລິສັດຂອງຕົນຢ້ານກົວ ແຕ່ບໍ່ເຮັດໃຫ້ຊົນໃນບໍລິສັດຂອງຜູ້ອື່ນຢ້ານກົວ ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແຕ່ບໍ່ຂົ່ມເຫັງງົວຝູງອື່ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແຕ່ບໍ່ຂົ່ມເຫັງງົວຝູງອື່ນ

ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງອື່ນ ແຕ່ບໍ່ຂົ່ມເຫັງງົວຝູງຕົນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຮັດໃຫ້ຊົນໃນບໍລິສັດຂອງຜູ້ອື່ນຢ້ານກົວ ແຕ່ບໍ່ເຮັດໃຫ້ຊົນໃນບໍລິສັດຂອງຕົນຢ້ານກົວ ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງອື່ນ ແຕ່ບໍ່ຂົ່ມເຫັງງົວຝູງຕົນ

ເປັນແນວນີ້ແລ ເຮົາກ່າວປຸຸບບຸກຄົນປະເພດນີ້ວ່າຄືງົວເຖິກທີ່ຂົ່ມເຫັງງົວຝູງອື່ນ ແຕ່ບໍ່ຂົ່ມເຫັງງົວຝູງຕົນ

ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນແລະຂົ່ມເຫັງງົວຝູງອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຮັດໃຫ້ຊົນໃນບໍລິສັດຂອງຕົນຢ້ານກົວແລະເຮັດໃຫ້ຊົນໃນບໍລິສັດ ຂອງຜູ້ອື່ນຢ້ານກົວ ບຸກຄົນປຽບຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນແລະຂົ່ມເຫັງງົວຝູງອື່ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືງົວເຖິກທີ່ຂົ່ມເຫັງງົວຝູງຕົນ ແລະຂົ່ມເຫັງງົວຝູງອື່ນ

ບຸກຄົນປຽບຄືງົວເຖິກທີ່ບໍ່ຂົ່ມເຫັງງົວຝູງຕົນແລະບໍ່ຂົ່ມເຫັງງົວຝູງອື່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ເຮັດໃຫ້ຊົນໃນບໍລິສັດຂອງຕົນຢ້ານກົວແລະບໍ່ເຮັດໃຫ້ຊົນໃນບໍລິສັດຂອງຜູ້ອື່ນຢ້ານກົວ ບຸກຄົນປຽບຄືງົວເຖິກທີ່ບໍ່ຂົ່ມເຫັງງົວຝູງຕົນແລະບໍ່ຂົ່ມເຫັງງົວຝູງອື່ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືງົວເຖິກທີ່ບໍ່ຂົ່ມເຫັງງົວຝູງຕົນແລະບໍ່ຂົ່ມເຫັງງົວຝູງອື່ນ

ພິກຂຸທັງຫຼາຍ ບຸກຄົນປຽບຄືງົວເຖິກ ໔ ຈໍາພວກນີ້ແລມີຜາກົດຢູ່ໃນໂລກ

**ພະລິວັດທະສູດທີ ໙ ຈົບ**

## ໗. ຣຸກຂະສູດ

### ວ່າດ້ວຍບຸກຄົນປຽບຄືຕົ້ນໄມ້

[໑໐໗] ພິກຂຸທັງຫຼາຍ ຕົ້ນໄມ້ ໔ ຊະນິດນີ້

ຕົ້ນໄມ້ ໔ ຊະນິດ[១] ອັນໃດແດ່ ຄື

໑. ຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນ[២]ຮ້ອມລ້ອມ
໒. ຕົ້ນໄມ້ເນື້ອອ່ອນ ແຕ່ມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ
໓. ຕົ້ນໄມ້ເນື້ອແຂງ ແຕ່ມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ
໔. ຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ

ພິກຂຸທັງຫຼາຍ ຕົ້ນໄມ້ ໔ ຊະນິດນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ບຸກຄົນປຽບຄືຕົ້ນໄມ້ ໔ ຈຳພວກ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ໌ ພວກໃດແດ່ ຄື

໑. ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ
໒. ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນ ແຕ່ມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ
໓. ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງ ແຕ່ມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ
໔. ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ

ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສິນ ມີທຳຊົ່ວຊາມ ແມ່ນບໍລິສັດຂອງເຂົາກໍເປັນຜູ້ທຸສິນ ມີທຳຊົ່ວຊາມ ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ

ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນ ແຕ່ມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສິນ ມີທຳຊົ່ວຊາມ ແຕ່ບໍລິສັດຂອງເຂົາເປັນຜູ້ມີສິນ ມີກັນລະຍານະທຳ ບຸກຄົນປຽບຄືຕົ້ນໄມ້ເນື້ອອ່ອນ ແຕ່ມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືຕົ້ນໄມ້ເນື້ອອ່ອນ ແຕ່ມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ

ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງ ແຕ່ມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສິນ ມີກັນລະຍານະທຳ ແຕ່ບໍລິສັດຂອງເຂົາເປັນຜູ້ທຸສິນ ມີທຳຊົ່ວຊາມ ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງ ແຕ່ມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືຕົ້ນໄມ້ເນື້ອແຂງ ແຕ່ມີຕົ້ນໄມ້ເນື້ອອ່ອນຮ້ອມລ້ອມ

ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສິນ ມີກັນລະຍານະທຳ ແມ່ນບໍລິສັດຂອງເຂົາກໍເປັນຜູ້ມີສິນ ມີກັນລະຍານະທຳ ບຸກຄົນປຽບຄືຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງຮ້ອມລ້ອມ

ພິກຂຸທັງຫຼາຍ ບຸກຄົນປຽບຄືຕົ້ນໄມ້ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ຣຸກຂະສູດທີ ໗ ຈົບ**

# ໑໐. ອາສີວິສະສູດ

## ວ່າດ້ວຍບຸກຄົນປຽບຄືອະສໍຣະພິດ

[໑໑໐] ພິກຂຸທັງຫຼາຍ ອະສໍຣະພິດ ໔ ຈຳພວກນີ້

ອະສໍຣະພິດ ໔ ຈຳພວກ໌ ອັນໃດແດ່ ຄື

໑. ອະສໍຣະພິດມີພິດແລ່ນ ແຕ່ພິດບໍ່ຮ້າຍ
໒. ອະສໍຣະພິດມີພິດຮ້າຍ ແຕ່ພິດບໍ່ແລ່ນ
໓. ອະສໍຣະພິດມີພິດແລ່ນແລະພິດຮ້າຍ
໔. ອະສໍຣະພິດມີພິດບໍ່ແລ່ນແລະພິດບໍ່ຮ້າຍ

ພິກຂຸທັງຫຼາຍ ອະສໍຣະພິດ ໔ ຈຳພວກນີ້ແລ

ໃນທຳນອງດຽວກັນ ບຸກຄົນປຽບຄືອະສໍຣະພິດ ໔ ຈຳພວກນີ້ແລມີຜາກົດຢູ່ ໃນໂລກ

ບຸກຄົນ ໔ ຈຳພວກ໌ ພວກໃດແດ່ ຄື

໑. ບຸກຄົນປຽບຄືອະສໍຣະພິດມີພິດແລ່ນ ແຕ່ພິດບໍ່ຮ້າຍ
໒. ບຸກຄົນປຽບຄືອະສໍຣະພິດມີພິດຮ້າຍ ແຕ່ພິດບໍ່ແລ່ນ
໓. ບຸກຄົນປຽບຄືອະສໍຣະພິດມີພິດແລ່ນແລະພິດຮ້າຍ
໔. ບຸກຄົນປຽບຄືອະສໍຣະພິດມີພິດບໍ່ແລ່ນແລະພິດບໍ່ຮ້າຍ

ບຸກຄົນປຽບຄືອະສໍຣະພິດມີພິດແລ່ນ ແຕ່ພິດບໍ່ຮ້າຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂກດຢູ່ປະຈຳ ໆ ແຕ່ຄວາມໂກດຂອງເຂົານັ້ນບໍ່ຄົງຢູ່ດົນ ບຸກຄົນປຽບຄືອະສໍຣະພິດມີພິດແລ່ນ ແຕ່ພິດບໍ່ຮ້າຍ ເປັນແນວນີ້ແລ ເຮົາກ່າວປຽບ ບຸກຄົນປະເພດນີ້ວ່າຄື ອະສໍຣະພິດມີພິດແລ່ນ ແຕ່ພິດບໍ່ຮ້າຍ

ບຸກຄົນປຽບຄືອະສໍຣະພິດມີພິດຮ້າຍ ແຕ່ພິດບໍ່ແລ່ນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໂກດຢູ່ປະຈຳປານໃດ ແຕ່ຄວາມໂກດຂອງເຂົານັ້ນຄົງຢູ່ດົນ ບຸກຄົນປຽບຄືອະສໍຣະພິດມີພິດຮ້າຍ ແຕ່ພິດບໍ່ແລ່ນ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືອະສໍຣະພິດມີພິດຮ້າຍ ແຕ່ພິດບໍ່ແລ່ນ

ບຸກຄົນປຽບຄືອະສໍຣະພິດມີພິດແລ່ນແລະພິດຮ້າຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂກດຢູ່ປະຈຳ ໆ ແລະຄວາມໂກດຂອງເຂົາກໍຄົງຢູ່ດົນ ບຸກຄົນປຽບຄື ອະສໍຣະພິດມີພິດແລ່ນແລະພິດຮ້າຍ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄື ອະສໍຣະພິດມີພິດແລ່ນແລະພິດຮ້າຍ

ບຸກຄົນປຽບຄືອະສໍຣະພິດມີພິດບໍ່ແລ່ນແລະພິດບໍ່ຮ້າຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໂກດຢູ່ປະຈຳປານໃດແລະຄວາມໂກດຂອງເຂົານັ້ນກໍບໍ່ຄົງຢູ່ດົນ ບຸກຄົນປຽບຄືອະສໍຣະພິດມີພິດບໍ່ແລ່ນແລະພິດບໍ່ຮ້າຍ ເປັນແນວນີ້ແລ ເຮົາກ່າວປຽບບຸກຄົນປະເພດນີ້ວ່າຄືອະສໍຣະພິດມີພິດບໍ່ແລ່ນແລະພິດບໍ່ຮ້າຍ

ພິກຂຸທັງຫຼາຍ ບຸກຄົນປຽບຄືອະສໍຣະພິດ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ອາສີວິສະສູດທີ ໑໐ ຈົບ**

**ວະລາຫະກະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມວະລາຫະກະສູດ
໒. ກຸມພະສູດ
໓. ອໍາພະສູດ
໗. ມູສິກະສູດ
໙. ຣຸກຂະສູດ
໔. ທຸຕິຍະວະລາຫະກະສູດ
໔. ອຸທະກະຣະຫະທະສູດ
໖. (ບໍ່ຜາກົດຊື່ສູດ)
໘. ພະລິວັດທະສູດ
໑໐. ອາສີວິສະສູດ

# ໘. ເກສິວັກ

## ໝວດວ່າດ້ວຍເກສີສາຣະຖີຜູ້ເຝິກມ້າ

## ໑. ເກສີສູດ

### ວ່າດ້ວຍເກສີສາຣະຖີຜູ້ເຝິກມ້າ

[໑໑໑] ຄັ້ງນັ້ນແລ ເກສີສາຣະຖີຜູ້ເຝິກມ້າ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມເກສີສາຣະຖີຜູ້ເຝິກມ້າດັ່ງນີ້ ວ່າ

"ເກສີ ທ່ານນັ້ນແລ ເຂົາຮູ້ກັນທົ່ວໄປວ່າເປັນສາຣະຖີຜູ້ເຝິກມ້າ ກໍທ່ານເຝິກມ້າທີ່ຄວນເຝິກໄດ້ ແນວໃດ"

ເກສີສາຣະຖີຜູ້ເຝິກມ້າທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຝິກມ້າທີ່ຄວນເຝິກ ດ້ວຍວິທີແບບສຸພາບ[໑]ແດ່ ວິທີແບບຮຸນແຮງ[໒]ແດ່ ວິທີທັງແບບສຸພາບແລະແບບຮຸນແຮງແດ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ເກສີ ຖ້າມ້າທີ່ຄວນເຝິກຂອງທ່ານເຝິກບໍ່ໄດ້ດ້ວຍວິທີແບບສຸພາບ ວິທີແບບຮຸນແຮງ ວິທີທັງແບບສຸພາບແລະແບບຮຸນແຮງ ທ່ານຈະເຮັດກັບມັນແນວໃດ"

ເກສີສາຣະຖີຜູ້ເຝິກມ້າທູນຕອບວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຖ້າມ້າທີ່ຄວນເຝິກຂອງຂ້າພຣະອົງເຝິກບໍ່ໄດ້ດ້ວຍວິທີແບບສຸພາບ ວິທີແບບຮຸນແຮງ ວິທີທັງແບບສຸພາພແແລະແບບຮຸນແຮງ ຂ້າພຣະອົງຈະຂ້າມັນສາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຂ້າພຣະອົງຄິດວ່າ ຄວາມເສຍຫາຍຢ່າໄດ້ມີແກ່ສຳນັກອາຈານຂອງເຮົາເລີຍ ຂ້າແດ່ພຣະອົງຜູ້ຈະເລີນ ກໍພຣະຜູ້ມີພຣະພາກເຈົ້າເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ພຣະຜູ້ມີພຣະພາກເຈົ້າຊົງເຝິກບຸຣຸດທີ່ຄວນເຝິກແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເກສີ ເຮົາເຝິກຜູ້ທີ່ຄວນເຝິກໄດ້ດ້ວຍວິທີແບບສຸພາບແດ່ ວິທີແບບຮຸນແຮງແດ່ ວິທີທັງແບບສຸພາພແແລະແບບຮຸນແຮງແດ່

ບັນດາວິທີ ໓ ຢ່າງນັ້ນ ຕໍ່ໄປນີ້ເປັນຄຳເວົ້າໃນວິທີແບບສຸພາບ ຄື ກາຍສຸດຈະຣິດເປັນແນວນີ້ ວິບາກແຫ່ງກາຍສຸດຈະຣິດເປັນແນວນີ້ ວະຈີສຸດຈະຣິດເປັນແນວນີ້ ວິບາກແຫ່ງວະຈີສຸດ

ຈະຣິດເປັນແນວນີ້ ມະໂນສຸດຈະຣິດເປັນແນວນີ້ ວິບາກແຫ່ງມະໂນສຸດຈະຣິດເປັນແນວນີ້ ເທວະດາເປັນແນວນີ້ ມະນຸດເປັນແນວນີ້

ຕໍ່ໄປນີ້ເປັນຄຳເວົ້າໃນວິທີແບບຮຸນແຮງ ຄື ກາຍທຸດຈະຣິດເປັນແນວນີ້ ວິບາກແຫ່ງກາຍທຸດຈະຣິດເປັນແນວນີ້ ວະຈີທຸດຈະຣິດເປັນແນວນີ້ ວິບາກແຫ່ງວະຈີທຸດຈະຣິດເປັນແນວນີ້ ມະໂນ ທຸດຈະຣິດເປັນແນວນີ້ ວິບາກແຫ່ງມະໂນທຸດຈະຣິດເປັນແນວນີ້ ນະຣົກເປັນແນວນີ້ ກຳເນີດສັດເດຍຣັດສານເປັນແນວນີ້ ແດນເຜດເປັນແນວນີ້

ຕໍ່ໄປນີ້ເປັນຄຳເວົ້າໃນວິທີທັງແບບສຸພາພແແລະແບບຮຸນແຮງ ຄື ກາຍສຸດຈະຣິດເປັນແນວນີ້ ວິບາກແຫ່ງກາຍສຸດຈະຣິດເປັນແນວນີ້ ກາຍທຸດຈະຣິດເປັນແນວນີ້ ວິບາກແຫ່ງກາຍທຸດຈະຣິດເປັນແນວນີ້ ວະຈີສຸດຈະຣິດເປັນແນວນີ້ ວິບາກແຫ່ງວະຈີສຸດຈະຣິດເປັນແນວນີ້ ວະຈີທຸດຈະຣິດເປັນແນວນີ້ ວິບາກແຫ່ງວະຈີທຸດຈະຣິດເປັນແນວນີ້ ມະໂນສຸດຈະຣິດເປັນແນວນີ້ ວິບາກແຫ່ງມະໂນສຸດຈະຣິດເປັນແນວນີ້ ມະໂນທຸດຈະຣິດເປັນແນວນີ້ ວິບາກແຫ່ງມະໂນທຸດຈະຣິດເປັນແນວນີ້ ເທວະດາເປັນແນວນີ້ ມະນຸດເປັນແນວນີ້ ນະຣົກເປັນແນວນີ້ ກຳເນີດສັດເດຍຣັດສານເປັນແນວນີ້ ແດນເຜດເປັນແນວນີ້”

ເກສີສາຣະຖີຜູ້ເຝິກມ້າທູນຖາມວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຖ້າບຸຣຸດຜູ້ທີ່ຄວນເຝິກໄດ້ຂອງພຣະອົງເຝິກບໍ່ໄດ້ດ້ວຍວິທີແບບສຸພາບ ວິທີແບບຮຸນແຮງ ວິທີທັງແບບສຸພາພແແລະແບບຮຸນແຮງ ພຣະຜູ້ມີພຣະພາກເຈົ້າຈະເຮັດກັບເຂົາແນວໃດ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ເກສີ ຖ້າບຸຣຸດຜູ້ທີ່ຄວນເຝິກໄດ້ຂອງເຮົາເຝິກບໍ່ໄດ້ດ້ວຍວິທີແບບສຸພາບ ວິທີແບບຮຸນແຮງ ວິທີທັງແບບສຸພາພແແລະແບບຮຸນແຮງ ເຮົາກໍຂ້າເຂົາສາ”

ເກສີສາຣະຖີຜູ້ເຝິກມ້າທູນຖາມວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ການຂ້າສັດບໍ່ສົມຄວນແກ່ພຣະຜູ້ມີພຣະພາກເຈົ້າເລີຍ ເປັນຫຍັງ  ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດແນວນີ້ວ່າ “ເຮົາກໍຈະຂ້າເຂົາສາ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ເກສີ ຄວາມຈິງການຂ້າສັດບໍ່ສົມຄວນແກ່ຕະຖາຄົດ ແຕ່ບຸຣຸດຜູ້ທີ່ຄວນເຝິກໃດ ເຝິກບໍ່ໄດ້ດ້ວຍວິທີແບບສຸພາບ ວິທີແບບຮຸນແຮງ ວິທີທັງແບບສຸພາບແລະແບບຮຸນແຮງ ຕະຖາຄົດຍ່ອມກຳນົດບຸຣຸດນັ້ນວ່າບໍ່ຄວນວ່າກ່າວສັ່ງສອນ ເພື່ອນພົມມະຈາຣີຜູ້ຮູ້ຕ່າງໆກຳນົດວ່າເຂົາເປັນຜູ້ບໍ່ຄວນວ່າກ່າວສັ່ງສອນ ເກສີ ຍ້ອນຂໍ້ທີ່ວ່າ ຕະຖາຄົດຍ່ອມກຳນົດບຸຣຸດນັ້ນວ່າບໍ່ຄວນວ່າກ່າວສັ່ງສອນ ແມ່ນເພື່ອນພົມມະຈາຣີຜູ້ຮູ້ຕ່າງໆກຳນົດວ່າເຂົາເປັນຜູ້ບໍ່ຄວນວ່າກ່າວສັ່ງສອນ ດັ່ງນີ້ນັ້ນຖືວ່າເປັນການຂ້າໃນອະຣິຍະວິໄນ”

ເກສີສາຣະຖີຜູ້ເຝິກມ້າຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍ້ທີ່ຕະຖາຄົດກໍານົດຜູ້ນັ້ນວ່າເປັນຜູ້ບໍ່ຄວນວ່າກ່າວສັ່ງສອນ ແມ່ນເພື່ອນພົມມະຈາຣີຜູ້ຮູ້ກໍກໍານົດວ່າເຂົາເປັນຜູ້ບໍ່ຄວນວ່າກ່າວສັ່ງສອນ ຊື່ວ່າເປັນການຂ້າຢ່າງດີແນ່ນອນ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທໍາແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວໍ້າ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທໍາແລະພຣະສົງວ່າເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈໍາຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ເກສີສູດທີ ໑ ຈົບ**

## ໘. ຊະວະສູດ

## ວ່າດ້ວຍຄວາມວ່ອງໄວຂອງມ້າຕົ້ນແລະຂອງພິກຂຸ

[໑໑໘] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໔ ປະການ ອັນໃດແດ່ ຄື

໑. ຄວາມຊື່ກົງ　　໘. ຄວາມວ່ອງໄວ
໓. ຄວາມອົດທົນ　　໔. ຄວາມສະງົບສະງ່ຽມ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການນີ້ແລຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທໍາ ໔ ປະການ ກໍຄືກັນສັນນັ້ນ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານໍາມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທໍາອັນຊະລີເປັນນາບຸນອັນປະເສີດຂອງໂລກ

ທໍາ ໔ ປະການ ອັນໃດແດ່ ຄື

໑. ຄວາມຊື່ກົງ　　໘. ຄວາມວ່ອງໄວ
໓. ຄວາມອົດທົນ　　໔. ຄວາມສະງົບສະງ່ຽມ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ໆລໆ ເປັນນາບຸນອັນປະເສີດຂອງໂລກ

**ຊົວສູດທີ ๘ ຈົບ**

## ໙. ປະໂຕທະສູດ

## ວ່າດ້ວຍເຫຼັກແຫຼມຂອງສາຣະຖີ

[໑໑໙] ພິກຂຸທັງຫຼາຍ ມ້າອາຊາໄນພັນດີ ໔ ປະເພດນີ້ມີຜາກົດຢູ່ໃນໂລກ

ມ້າອາຊາໄນພັນດີ ໔ ປະເພດ ອັນໃດແດ່ ຄື

໑. ມ້າອາຊາໄນພັນດີບາງໂຕໃນໂລກນີ້ພໍເຫັນເງົາເຫຼັກແຫຼມ[?]ກໍຫວາດຫວັ່ນ ສຳນຶກວ່າ "ມື້ນີ້ ສາຣະຖີຜູ້ເຝິກມ້າຈັກໃຫ້ເຮົາທຳການອັນໃດບໍ ເຮົາຈັກສະໜອງເຂົາແນວໃດ" ມ້າອາຊາໄນພັນດີບາງໂຕໃນໂລກນີ້ ເປັນແນວນີ້ແລ ມ້າອາຊາໄນພັນດີປະເພດທີ ໑ ນີ້ມີຜາກົດຢູ່ໃນໂລກ

๒. ມ້າອາຊາໄນພັນດີບາງໂຕໃນໂລກນີ້ເຫັນເງົາເຫຼັກແຫຼມກໍບໍ່ຫວາດຫວັ່ນ ບໍ່ສຳນຶກ ແຕ່ເມື່ອຖືກແທງດ້ວຍເຫຼັກແຫຼມທີ່ຂຸມຂົນຈຶ່ງຫວາດຫວັ່ນ ສຳນຶກວ່າ "ມື້ນີ້ ສາຣະຖີຜູ້ເຝິກມ້າຈັກໃຫ້ເຮົາທຳການອັນໃດບໍ ເຮົາຈະສະໜອງເຂົາແນວໃດ" ມ້າອາຊາໄນພັນດີບາງໂຕໃນໂລກນີ້ ເປັນແນວນີ້ແລ ມ້າອາຊາໄນພັນດີປະເພດທີ ๒ ນີ້ມີຜາກົດຢູ່ໃນໂລກ

໙. ມ້າອາຊາໄນພັນດີບາງໂຕໃນໂລກນີ້ເຫັນເງົາເຫຼັກແຫຼມກໍບໍ່ຫວາດຫວັ່ນ ບໍ່ສຳນຶກ ແມ່ນຈະຖືກແທງດ້ວຍເຫຼັກແຫຼມທີ່ຂຸມຂົນກໍຍັງບໍ່ຫວາດຫວັ່ນ ບໍ່ສຳນຶກ ແຕ່ເມື່ອຖືກແທງດ້ວຍເຫຼັກແຫຼມເຖິງຜິວໜັງຈຶ່ງຫວາດຫວັ່ນ ສຳນຶກວ່າ "ມື້ນີ້ ສາຣະຖີຜູ້ເຝິກມ້າຈັກໃຫ້ເຮົາທຳການອັນໃດບໍ ເຮົາຈະສະໜອງເຂົາແນວໃດ" ມ້າອາຊາໄນພັນດີບາງໂຕໃນໂລກນີ້ ເປັນແນວນີ້ແລ ມ້າອາຊາໄນພັນດີປະເພດທີ ໙ ນີ້ມີຜາກົດຢູ່ໃນໂລກ

໔. ມ້າອາຊາໄນພັນດີບາງໂຕໃນໂລກນີ້ເຫັນເງົາເຫຼັກແຫຼມກໍບໍ່ຫວາດຫວັ່ນ ບໍ່ສຳນຶກ ແມ່ນຈະຖືກແທງດ້ວຍເຫຼັກແຫຼມ ທີ່ຂຸມຂົນກໍບໍ່ຫວາດຫວັ່ນ ບໍ່ສຳນຶກ ແມ່ນຈະຖືກແທງດ້ວຍເຫຼັກແຫຼມເຖິງ ຜິວໜັງກໍບໍ່ຫວາດຫວັ່ນ ບໍ່ສຳນຶກ ແຕ່ເມື່ອຖືກແທງດ້ວຍເຫຼັກແຫຼມເຖິງກະດູກຈຶ່ງຫວາດຫວັ່ນ ສຳນຶກວ່າ "ມື້ນີ້ ສາ

ຣະຖີຜູ້ເຝິກມ້າຈັກໃຫ້ເຮົາທຳການອັນໃດນໍ ເຮົາຈະສະໜອງເຂົາແນວໃດ" ມ້າອາຊາໄນພັນດີບາງໂຕໃນໂລກນີ້ ເປັນແນວນີ້ແລ ມ້າອາຊາໄນພັນດີປະເພດທີ ໔ ນີ້ມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີ ໔ ປະເພດນີ້ແລມີຜາກົດຢູ່ໃນໂລກ ສັນໃດ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ໔ ຈຳພວກນີ້ກໍຄືກັນສັນນັ້ນແລ ມີຜາກົດຢູ່ໃນໂລກ ບຸຣຸດອາຊາໄນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ຟັງຂ່າວວ່າ "ໃນໝູ່ບ້ານຫຼືເຂດນັ້ນສະຕີຫຼືບຸຣຸດປະສົບທຸກຫຼືຕາຍ" ເຂົາສະຫຼົດໃຈ ສຳນຶກໂຕຍ້ອນຟັງຂ່າວນັ້ນຈຶ່ງເລີ່ມພ່ຳເພັງພຽນໂດຍແຍບຄາຍ ອຸທິດກາຍແລະໃຈ ເຮັດໃຫ້ແຈ້ງປະຣະມັດຖະສັດຈະດ້ວຍນາມກາຍ ແລະເຫັນແຈ້ງທົ່ວເຖິງດ້ວຍປັນຍາ ເຮົາກ່າວປຽບບຸຣຸດອາຊາໄນຜູ້ຈະເລີນນີ້ວ່າຄືມ້າອາຊາໄນພັນດີເຫັນເງົາເຫຼັກແຫຼມກໍຫວາດຫວັ່ນ ສຳນຶກ ບຸຣຸດອາຊາໄນ ຜູ້ຈະເລີນລາງຄົນໃນໂລກນີ້ ເປັນແນວນີ້ແລ ບຸຣຸດອາຊາໄນຜູ້ຈະເລີນປະເພດທີ ໑ ນີ້ມີຜາກົດຢູ່ໃນໂລກ

໒. ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ບໍ່ໄດ້ຟັງຂ່າວວ່າ "ໃນໝູ່ບ້ານຫຼືເຂດນັ້ນ ສະຕີຫຼືບຸຣຸດປະສົບທຸກຫຼືຕາຍ" ແຕ່ເຂົາເຫັນສະຕີຫຼືບຸຣຸດປະສົບທຸກຫຼືຕາຍດ້ວຍໂຕເອງເລີຍຢ່າງແນ່ນອນ ເຂົາສະຫຼົດໃຈ ສຳນຶກໂຕຍ້ອນເຫັນເຫດການນັ້ນ ຈຶ່ງເລີ່ມພ່ຳເພັງພຽນໂດຍແຍບຄາຍ ອຸທິດກາຍແລະໃຈ ເຮັດໃຫ້ແຈ້ງປະຣະມັດຖະສັດຈະດ້ວຍນາມກາຍ ແລະເຫັນແຈ້ງທົ່ວເຖິງດ້ວຍປັນຍາ ເຮົາກ່າວປຽບບຸຣຸດອາຊາໄນຜູ້ຈະເລີນນີ້ວ່າຄືມ້າອາຊາໄນພັນດີທີ່ຖືກແທງດ້ວຍເຫຼັກແຫຼມຈຶ່ງຫວາດຫວັ່ນ ສຳນຶກ ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ ເປັນແນວນີ້ແລ ບຸຣຸດອາຊາໄນ ຜູ້ຈະເລີນປະເພດທີ ໒ ນີ້ມີຜາກົດຢູ່ໃນໂລກ

໓. ບຸຣຸດອາຊາໄນລາງຄົນໃນໂລກນີ້ບໍ່ໄດ້ຟັງຂ່າວວ່າ "ໃນໝູ່ບ້ານຫຼືເຂດຊື່ນັ້ນສະຕີຫຼືບຸຣຸດປະສົບທຸກຫຼືຕາຍ" ບໍ່ໄດ້ເຫັນສະຕີຫຼືບຸຣຸດປະສົບທຸກຫຼືຕາຍດ້ວຍໂຕເອງ ແຕ່ຍາດຫຼືສາໂລຫິດ[1] ຂອງເຂົາປະສົບທຸກຫຼືຕາຍ ເຂົາສະຫຼົດໃຈສຳນຶກໂຕຍ້ອນເຫດການນັ້ນ ຈຶ່ງເລີ່ມພ່ຳເພັງພຽນໂດຍແຍບຄາຍ ອຸທິດກາຍແລະໃຈ ເຮັດໃຫ້ແຈ້ງ ປະຣະມັດຖະສັດຈະດ້ວຍນາມກາຍ ແລະເຫັນແຈ້ງທົ່ວເຖິງດ້ວຍປັນຍາ ເຮົາກ່າວປຽບບຸຣຸດອາຊາໄນຜູ້ຈະເລີນນີ້ວ່າຄືມ້າອາຊາໄນພັນດີທີ່ຖືກແທງດ້ວຍເຫຼັກແຫຼມເຖິງຜິວໜັງຈຶ່ງຫວາດຫວັ່ນ ສຳນຶກ ບຸຣຸດ

ອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ ເປັນແນວນີ້ແລ ບຸຣຸດອາຊາໄນຜູ້ຈະເລີນປະເພດທີ ໓ ນີ້ມີຜາກົດຢູ່ໃນໂລກ

໔. ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ບໍ່ໄດ້ຟັງຂ່າວວ່າ "ໃນໝູ່ບ້ານຫຼືເຂດນັ້ນ ສະຕີຫຼືບຸຣຸດປະສົບທຸກຫຼືຕາຍ" ບໍ່ໄດ້ເຫັນສະຕີຫຼືບຸຣຸດ ປະສົບທຸກຫຼືຕາຍດ້ວຍໂຕເອງ ທັງຍາດຫຼືສາໂລຫິດຂອງເຂົາ ກໍບໍ່ໄດ້ປະສົບທຸກຫຼືຕາຍ ແຕ່ໂຕເຂົາເອງປະສົບເວທະນາທັງຫຼາຍ ອັນມີໃນຮ່າງກາຍເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ເຂົາສະຫຼົດໃຈ ສຳນຶກໂຕຍ້ອນປະສົບທຸກນັ້ນ ຈຶ່ງເລີ່ມພໍ່າເພັງພຽນໂດຍແຍບຄາຍ ອຸທິດກາຍແລະໃຈ ເຮັດໃຫ້ແຈ້ງປະຣະມັດຖະສັດຈະດ້ວຍນາມກາຍ ແລະເຫັນແຈ້ງທົ່ວເຖິງດ້ວຍປັນຍາ ເຮົາກ່າວປຽບບຸຣຸດອາຊາໄນຜູ້ຈະເລີນນີ້ວ່າຄືມ້າອາຊາໄນພັນດີທີ່ຖືກແທງດ້ວຍເຫຼັກແຫຼມຈົນເຖິງກະດູກຈຶ່ງຫວາດຫວັ່ນ ສຳນຶກ ບຸຣຸດອາຊາໄນ ຜູ້ຈະເລີນລາງຄົນໃນໂລກນີ້ ເປັນແນວນີ້ແລ ບຸຣຸດອາຊາໄນຜູ້ຈະເລີນປະເພດທີ ໔ ນີ້ມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ປະໂຕທະສູດທີ ໓ ຈົບ**

## ໔. ນາຄະສູດ

## ວ່າດ້ວຍອົງຂອງຊ້າງຕົ້ນ

[໑໑໔] ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການຍ່ອມເປັນຊ້າງຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໔ ປະການ ອັນໃດແດ່ ຄື
ຊ້າງຂອງພຣະຣາຊາໃນໂລກນີ້

໑. ເປັນສັດເຊື່ອຟັງ
໒. ເປັນສັດອົດທົນໄດ້
໓. ເປັນສັດຂ້າໄດ້
໔. ເປັນສັດໄປໄດ້

ຊ້າງຂອງພຣະຣາຊາເປັນສັດເຊື່ອຟັງ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງ່ຽງຫູຟັງເຫດການທີ່

ຄວາມຊ້າງໃຫ້ເຮັດຄືເຫດການທີ່ເຄີຍເຮັດບໍ່ເຄີຍເຮັດ ຊ້າງຂອງພຣະຣາຊາເປັນສັດເຊື່ອຟັງ ເປັນແນວນີ້ແລ

ຊ້າງຂອງພຣະຣາຊາເປັນສັດຂ້າໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜາມລະພູມແລ້ວ ຂ້າຊ້າງແດ່ ຂ້າຄວານຊ້າງແດ່ ຂ້າມ້າແດ່ ຂ້າຄົນຂີ່ມ້າແດ່ ທຳລາຍລົດແດ່ ຂ້າພົນລົດແດ່ ຂ້າພົນຍ່າງແດ່ ຊ້າງຂອງພຣະຣາຊາເປັນສັດຂ້າໄດ້ ເປັນແນວນີ້ແລ

ຊ້າງຂອງພຣະຣາຊາເປັນສັດອົດທົນໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜາມລະພູມແລ້ວ ອົດທົນຕໍ່ການປະຫານດ້ວຍຫອກ ດາບ ລູກສອນ ງ້າວ ສຽງກອງ ບັນເດາະ ສັງ ແລະມະໂຫຣະທຶກທີ່ກະຫື່ມ ຊ້າງຂອງພຣະຣາຊາເປັນສັດອົດທົນໄດ້ ເປັນແນວນີ້ແລ

ຊ້າງຂອງພຣະຣາຊາເປັນສັດໄປໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ໄປສູ່ທິດທີ່ຄວານຊ້າງໄສໄປ ຄື ທິດທີ່ເຄີຍໄປຫຼືທິດທີ່ບໍ່ເຄີຍໄປໄດ້ໂດຍທັນທີ ຊ້າງຂອງພຣະຣາຊາເປັນສັດໄປໄດ້ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການນີ້ແລຍ່ອມ ເປັນຊ້າງຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການກໍຄືກັນສັນນັ້ນ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໔ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

| | |
|---|---|
| ໑. ເປັນຜູ້ເຊື່ອຟັງ | ໒. ເປັນຜູ້ຂ້າໄດ້ |
| ໓. ເປັນຜູ້ອົດທົນ | ໔. ເປັນຜູ້ໄປໄດ້ |

ພິກຂຸເປັນຜູ້ເຊື່ອຟັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງຽງໂສດລົງຟັງທຳ ໃນເມື່ອຜູ້ອື່ນສະແດງທຳວິໄນທີ່ຕະຖາຄົດປະກາດແລ້ວ ພິກຂຸເປັນຜູ້ເຊື່ອຟັງ ເປັນແນວນີ້ແລ

ພິກຂຸເປັນຜູ້ຂ້າໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຍິນດີກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີພະຍາບາດວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ໝົດໄປ ເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີວິຫິງສາວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ພິກຂຸເປັນຜູ້ຂ້າໄດ້ ເປັນແນວນີ້ແລ

ພິກຂຸເປັນຜູ້ອົດທົນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ຕໍ່ການຖືກເຮືອດຍຸງ ແດດ ແລະສັດເລືອຄານທັງຫຼາຍລົບກວນ ຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ເປັນຜູ້ອົດກັ້ນເວທະນາທັງຫຼາຍ ອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ພິກຂຸເປັນຜູ້ອົດທົນໄດ້ ເປັນແນວນີ້ແລ

ພິກຂຸເປັນຜູ້ໄປໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມໄປສູ່ທິດທີ່ບໍ່ເຄີຍໄປຕະຫຼອດການຍາວນານນີ້ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິທັງປວງ ຄວາມໝົກສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບທຸກ ນິບພານ ພິກຂຸເປັນຜູ້ໄປໄດ້ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ນາຄະສູດທີ ໔ ຈົບ**

## ໕. ຖານະສູດ

## ວ່າດ້ວຍຖານະແຫ່ງຄວາມເສື່ອມແລະຄວາມຈະເລີນ

[໑໑໕] ພິກຂຸທັງຫຼາຍ ຖານະ[໑] ໔ ປະການນີ້

ຖານະ ໔ ປະການ ອັນໃດແດ່ ຄື

໑. ຖານະທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈແລະເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ
໒. ຖານະທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ

໓. ຖານະທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ
໔. ຖານະທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈແລະເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ

ບັນດາຖານະ ໔ ປະການນັ້ນ ຖານະທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈແລະເມື່ອເຮັດຍ່ອມເປັນ ໄປເພື່ອຄວາມສູນຫາຍ ບັນດິດຍ່ອມຮູ້ວ່າຖານະນີ້ບໍ່ຄວນເຮັດທັງ ໒ ສ່ວນ ຄື ຮູ້ວ່າບໍ່ຄວນ ເຮັດທັງສ່ວນທີ່ເປັນຖານະທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈ ແລະຮູ້ວ່າບໍ່ຄວນເຮັດທັງສ່ວນທີ່ເປັນຖານະ ທີ່ເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ ບັນດິດຍ່ອມຮູ້ວ່າຖານະນີ້ບໍ່ຄວນເຮັດທັງ ໒ ສ່ວນ

ບັນດາຖານະ ໔ ປະການນັ້ນ ຖານະທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ ເພິ່ງຮູ້ຄົນພານແລະບັນດິດໃນເລື້ອງກຳລັງຂອງບຸຣຸດ ຄວາມພຽນຂອງບຸຣຸດ ແລະຄວາມບາກບັ່ນຂອງບຸຣຸດ ຄົນພານຍ່ອມບໍ່ເຫັນປະຈັກດັ່ງນີ້ວ່າ "ຖານະນີ້ທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈກໍຈິງ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ" ເຂົາຍ່ອມບໍ່ເຮັດຖານະນັ້ນ ເມື່ອບໍ່ເຮັດຈິ່ງເປັນໄປເພື່ອຄວາມສູນຫາຍ ສ່ວນບັນດິດຍ່ອມເຫັນປະຈັກດັ່ງນີ້ວ່າ "ຖານະນີ້ທີ່ໃຫ້ເຮັດສິ່ງທີ່ບໍ່ໜ້າພໍໃຈກໍຈິງ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ" ເຂົາຍ່ອມເຮັດຖານະນັ້ນ ເມື່ອເຮັດຈິ່ງເປັນໄປເພື່ອປະໂຫຍດ

ບັນດາຖານະ ໔ ປະການນັ້ນ ຖານະທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ ເພິ່ງຮູ້ຄົນພານແລະບັນດິດໃນເລື້ອງກຳລັງຂອງບຸຣຸດ ຄວາມພຽນຂອງບຸຣຸດ ແລະຄວາມບາກບັ່ນຂອງບຸຣຸດ ຄົນພານຍ່ອມບໍ່ເຫັນປະຈັກດັ່ງນີ້ວ່າ "ຖານະນີ້ທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈກໍຈິງ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ" ເຂົາຍ່ອມເຮັດຖານະນັ້ນ ແຕ່ເມື່ອເຮັດຈິ່ງເປັນໄປເພື່ອຄວາມສູນຫາຍ ສ່ວນບັນດິດຍ່ອມເຫັນປະຈັກດັ່ງນີ້ວ່າ

"ຖານະນີ້ທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈກໍຈິງ ແຕ່ເມື່ອເຮັດຍ່ອມເປັນໄປເພື່ອຄວາມສູນຫາຍ" ເຂົາບໍ່ເຮັດຖານະນັ້ນ ເມື່ອບໍ່ເຮັດຈິ່ງເປັນໄປເພື່ອປະໂຫຍດ

ບັນດາຖານະ ໔ ປະການນັ້ນ ຖານະທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈ ແລະເມື່ອເຮັດຍ່ອມເປັນໄປເພື່ອປະໂຫຍດ ບັນດິດຍ່ອມຮູ້ວ່າຖານະນີ້ຄວນເຮັດທັງ ໒ ສ່ວນ ຄື ຮູ້ວ່າຄວນເຮັດທັງສ່ວນທີ່ເປັນຖານະທີ່ໃຫ້ເຮັດສິ່ງທີ່ໜ້າພໍໃຈ ແລະຮູ້ວ່າຄວນເຮັດທັງສ່ວນທີ່ເປັນຖານະທີ່ເມື່ອເຮັດ ຍ່ອມເປັນໄປເພື່ອປະໂຫຍດ ບັນດິດຍ່ອມຮູ້ວ່າຖານະນີ້ຄວນເຮັດທັງ ໒ ສ່ວນ

ພິກຂຸທັງຫຼາຍ ຖານະ ໔ ປະການນີ້ແລ

**ຖານະສູດທີ ໕ ຈົບ**

# ໖. ອັບປະມາທະສູດ

## ວ່າດ້ວຍຄວາມບໍ່ຜະໝາດ

[໑໑໖] ພິກຂຸທັງຫຼາຍ ພວກທ່ານຄວນທຳຄວາມບໍ່ຜະໝາດໂດຍຖານະ ໔ ປະການ

ຖານະ ໔ ປະການ ອັນໃດແດ່ ຄື

໑. ຈົ່ງລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ແລະຢ່າຜະໝາດໃນການລະກາຍທຸດຈະຣິດພ່ຳເພັງກາຍສຸດຈະຣິດນັ້ນ
໒. ຈົ່ງລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ແລະຢ່າຜະໝາດໃນການລະວະຈີທຸດຈະຣິດພ່ຳເພັງວະຈີສຸດຈະຣິດນັ້ນ
໓. ຈົ່ງລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ແລະຢ່າຜະໝາດໃນການລະມະໂນທຸດຈະຣິດພ່ຳເພັງມະໂນສຸດຈະຣິດນັ້ນ
໔. ຈົ່ງລະມິດສາທິດຖິ ພ່ຳເພັງສຳມາທິດຖິ ແລະຢ່າຜະໝາດໃນການລະມິດສາທິດຖິພ່ຳເພັງສຳມາທິດຖິນັ້ນ

ພິກຂຸທັງຫຼາຍ ເມື່ອໃດພິກຂຸລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ລະມິດສາທິດຖິພ່ຳເພັງສຳມາທິດຖິ ເມື່ອນັ້ນທ່ານຍ່ອມບໍ່ຢ້ານຄວາມຕາຍທີ່ຈະມາເຖິງໃນມື້ທາງໜ້າ

**ອັບປະມາທະສູດທີ ໖ ຈົບ**

# ໗. ອາຣັກຂະສູດ

## ວ່າດ້ວຍສະຕິເຄື່ອງຖືຮັກສາ

[໑໑໗] ພິກຂຸທັງຫຼາຍ ພິກຂຸເພິ່ງທຳຄວາມບໍ່ຜະໝາດ ຄື ມີສະຕິເຄື່ອງຖືຮັກສາໃຈໂດຍສົມຄວນແກ່ຕົນໃນຖານະ ໔ ປະການ

ຖານະ ໔ ປະການ ອັນໃດແດ່ ຄື
ເພິ່ງທຳຄວາມບໍ່ຜະໝາດ ຄື ມີສະຕິເຄື່ອງຖືຮັກສາໃຈໂດຍສົມຄວນແກ່ຕົນວ່າ

໑. ຈິດຂອງເຮົາຢ່າກຳໜັດໃນທຳທີ່ເປັນເຫດແຫ່ງຄວາມກຳໜັດ
໒. ຈິດຂອງເຮົາຢ່າຂັດເຄືອງໃນທຳທີ່ເປັນເຫດແຫ່ງຄວາມຂັດເຄືອງ

໓. ຈິດຂອງເຮົາຢ່າຫຼົງໃນທໍາທີ່ເປັນເຫດແຫ່ງຄວາມຫຼົງ

໔. ຈິດຂອງເຮົາຢ່າມົວເມົາໃນທໍາທີ່ເປັນເຫດແຫ່ງຄວາມມົວເມົາ

ໃນການໃດ ຈິດຂອງພິກຂຸບໍ່ກໍາໜັດໃນທໍາທີ່ເປັນເຫດແຫ່ງຄວາມກໍາໜັດ ຍ້ອນປາສະຈາກຄວາມກໍາໜັດ ຈິດບໍ່ຂັດເຄືອງໃນທໍາທີ່ເປັນເຫດແຫ່ງຄວາມຂັດເຄືອງຍ້ອນປາສະຈາກຄວາມຂັດເຄືອງ ຈິດບໍ່ຫຼົງໃນທໍາທີ່ເປັນເຫດແຫ່ງຄວາມຫຼົງຍ້ອນປາສະຈາກຄວາມຫຼົງຈິດບໍ່ມົວເມົາໃນທໍາທີ່ເປັນເຫດແຫ່ງ ຄວາມມົວເມົາ ຍ້ອນປາສະຈາກຄວາມມົວເມົາ ໃນການນັ້ນພິກຂຸນັ້ນຍ່ອມບໍ່ຫວາດຜະຫວາບໍ່ຫວັ່ນໄຫວ ບໍ່ສະທົກສະທ້ານ ບໍ່ເຖິງຄວາມສະດຸ້ງ ແລະບໍ່ຫຼົງເຊື່ອແມ່ນຍ້ອນຄໍາເວົ້າຂອງສະມະນະເປັນເຫດ

**ອາຣັກຂະສູດທີ ໗ ຈົບ**

# ໘. ສັງເວຊະນີຍະສູດ

## ວ່າດ້ວຍສັງເວຊະນີຍະສະຖານ

[໑໑໘] ພິກຂຸທັງຫຼາຍ ສັງເວຊະນີຍະສະຖານ[໒] ໔ ແຫ່ງນີ້ເປັນສະຖານທີ່ທີ່ກຸນລະບຸດຜູ້ມີສັດທາ ຄວນໄປເບິ່ງ

ສັງເວຊະນີຍະສະຖານ ໔ ແຫ່ງ ອັນໃດແດ່ ຄື

໑. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາຄວນໄປເບິ່ງດ້ວຍຣະນຶກວ່າ "ຕະຖາຄົດ ປະສູດໃນບ່ອນນີ້"

໒. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາຄວນໄປເບິ່ງດ້ວຍຣະນຶກວ່າ "ຕະຖາຄົດ ຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານໃນບ່ອນນີ້"

໓. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາຄວນໄປເບິ່ງດ້ວຍຣະນຶກວ່າ "ຕະຖາຄົດ ຊົງປະກາດທໍາມະຈັກອັນປະເສີດໃນບ່ອນນີ້"

໔. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາຄວນໄປເບິ່ງດ້ວຍຣະນຶກວ່າ "ຕະຖາຄົດ ສະເດັດດັບຂັນທະປະຣິນິບພານດ້ວຍອະນຸປາທິເສສະນິບພານທາດໃນບ່ອນນີ້"

ພິກຂຸທັງຫຼາຍ ສັງເວຊະນີຍະສະຖານ ໔ ແຫ່ງນີ້ແລເປັນສະຖານທີ່ທີ່ກຸນລະບຸດຜູ້ມີສັດທາຄວນໄປເບິ່ງ

**ສັງເວຊະນີຍະສູດທີ ໘ ຈົບ**

## ໙. ປະຖົມພະຍະສູດ

### ວ່າດ້ວຍໄພພາຍໃນ ສູດທີ ໑

[໑໑໙] ພິກຂຸທັງຫຼາຍ ໄພ ໔ ປະການນີ້

ໄພ ໔ ປະການ ອັນໃດແດ່ ຄື

໑. ຊາດໄພ (ໄພເກີດຍ້ອນຄວາມເກີດ)
໒. ຊະຣາໄພ (ໄພເກີດຍ້ອນຄວາມແກ່)
໓. ພະຍາທິໄພ (ໄພເກີດຍ້ອນຄວາມເຈັບໄຂ້)
໔. ມໍຣະນະໄພ (ໄພເກີດຍ້ອນຄວາມຕາຍ)

ພິກຂຸທັງຫຼາຍ ໄພ ໔ ປະການນີ້ແລ

**ປະຖົມພະຍະສູດທີ ໙ ຈົບ**

## ໑໐. ທຸຕິຍະພະຍະສູດ

### ວ່າດ້ວຍໄພພາຍນອກ ສູດທີ ໒

[໑໒໐] ພິກຂຸທັງຫຼາຍ ໄພ ໔ ປະການນີ້

ໄພ ໔ ປະການ ອັນໃດແດ່ ຄື

໑. ອັກຄີໄພ (ໄພເກີດຈາກໄຟ)
໒. ອຸທະກະໄພ (ໄພເກີດຈາກນໍ້າ)
໓. ຣາຊະໄພ (ໄພເກີດຈາກພຣະຣາຊາ)
໔. ໂຈຣະໄພ (ໄພເກີດຈາກໂຈນ)

ພິກຂຸທັງຫຼາຍ ໄພ ໔ ປະການນີ້ແລ

**ທຸຕິຍະພະຍະສູດທີ ໑໐ ຈົບ**

**ເກສີວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເກສີສູດ
໒. ຊະວະສູດ
໓. ປະໂຕທະສູດ
໔. ນາຄະສູດ
໕. ຖານະສູດ
໖. ອັປປະມາທະສູດ
໗. ອາຣັກຂະສູດ
໘. ສັງເວຊະນີຍະສູດ
໙. ປະຖົມພະຍະສູດ
໑໐. ທຸຕິຍະພະຍະສູດ

# ໓. ພະຍະວັກ

## ໝວດວ່າດ້ວຍໄພ

### ໑. ອັດຕານຸວາທະສູດ

### ວ່າດ້ວຍອັດຕານຸວາທະໄພ

[໑໒໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໄພ ໔ ປະການນີ້

ໄພ ໔ ປະການ ອັນໃດແດ່ ຄື

໑. ອັດຕານຸວາທະໄພ[໑]
໒. ປະຣະນຸວາທະໄພ[໒]
໓. ທັນທະໄພ[໓]
໔. ທຸຄະຕິໄພ[໔]

ອັດຕານຸວາທະໄພ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ກໍຖ້າເຮົາເພິ່ງປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເປັນຫຍັງເຮົາຈະຕິຕຽນໂຕເຮົາເອງໂດຍສີນບໍ່ໄດ້" ເຂົາຢ້ານໄພທີ່ເກີດຈາກການຕິຕຽນຕົນເອງ ຈຶ່ງລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ອັດຕານຸວາທະໄພ

ປະຣະນຸວາທະໄພ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ກໍຖ້າເຮົາເພິ່ງປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເປັນຫຍັງຄົນອື່ນຈະຕິຕຽນເຮົາໂດຍສີນບໍ່ໄດ້" ເຂົາຢ້ານໄພທີ່ເກີດຈາກຜູ້ອື່ນຕິຕຽນ ຈຶ່ງລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດ

ຈະຣິດ ພໍ່າເພັງວະຈີ ສຸດຈະຣິດ ລະມະໂນທຸດຈະຣິດ ພໍ່າເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ປະຣະນຸວາທະໄພ

ທັນທະໄພ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນພຣະຣາຊາຮັບສັ່ງໃຫ້ຈັບໂຈນຜູ້ມັກປະພຶດຊົ່ວແລ້ວໃຫ້ລົງການລົງໂທດນານາຊະນິດ ຄື ຊ້ຽນດ້ວຍແສ້ແດ່ ຊ້ຽນດ້ວຍຫວາຍແດ່ ຕີດ້ວຍໄມ້ກະບອງແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດຫູແດ່ ຕັດດັງແດ່ ຕັດທັງຫູແລະດັງແດ່ ເຮັດໃຫ້ເປັນພາຊະນະສໍາລັບຮອງໝໍ້ນໍ້າເຂົ້າແດ່ ເຮັດໃຫ້ກ້ຽງເກົາຄືຫອຍສັງແດ່ ເຮັດໃຫ້ມີປາກຄືປາກຣາຫູແດ່ ເຮັດໃຫ້ມີພວງມາໄລໄຟແດ່ ເຮັດໃຫ້ມືມີໄຟລຸກຮຸ່ງເປັນແປວແດ່ ເຮັດໃຫ້ເປັນກຽວໜັງໂຕຊາຍແດ່ ເຮັດໃຫ້ນຸ່ງໜັງຕົນເອງຄືນຸ່ງຜ້າເປື້ອນແດ່ ເຮັດໃຫ້ຢືນກວາງແດ່ ເຮັດໃຫ້ຄືຊີ້ນຕິດເບັດແດ່ ເຮັດໃຫ້ເປັນຕ່ອນທໍ່ກະຫາປະນະແດ່ ເຮັດໃຫ້ເປັນທີ່ຮັບນໍ້າດ່າງແດ່ ເຮັດໃຫ້ໝຸນຄືກອນເຫຼັກແດ່ ເຮັດໃຫ້ເປັນຕັ່ງທີ່ເຮັດດ້ວຍເຟືອງແດ່ ຣົດດ້ວຍນໍ້າມັນຮ້ອນແດ່ ໃຫ້ໝາກັດກິນແດ່ ໃຫ້ນອນຫງາຍເທິງຫຼາວທັງທີ່ຍັງມີຊີວິດຢູ່ແດ່ ຕັດຫົວດ້ວຍດາບແດ່

ເຂົາມີຄວາມຄິດແນວນີ້ວ່າ "ຍ້ອນກໍາຊົ່ວເຊັ່ນໃດເປັນເຫດ ພຣະຣາຊາຈຶ່ງຮັບສັ່ງໃຫ້ຈັບໂຈນຜູ້ມັກປະພຶດຊົ່ວແລ້ວໃຫ້ລົງການລົງໂທດນານາຊະນິດ ຄື ຊ້ຽນດ້ວຍແສ້ແດ່ ຯລຯ ຕັດຫົວດ້ວຍດາບແດ່" ກໍຖ້າເຮົາເອງເພິ່ງເຮັດກໍາຊົ່ວເຊັ່ນນັ້ນ ພຣະຣາຊາເພິ່ງຮັບສັ່ງໃຫ້ຈັບເຮົາ ແລ້ວໃຫ້ລົງການລົງໂທດນານາຊະນິດແນວນີ້ ຄື ຊ້ຽນດ້ວຍແສ້ແດ່ ຯລຯ ຕັດຫົວດ້ວຍດາບແດ່ ເຂົາຢ້ານທັນທະໄພ ບໍ່ຫຼົງແຍ່ງຊີງສິ່ງຂອງຂອງຄົນອື່ນ ນີ້ຮຽກວ່າ ທັນທະໄພ

ທຸກຄະຕິໄພ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ຜົນຂອງກາຍທຸດຈະຣິດໃນພົບໜ້າເປັນຜົນຊົ່ວຊາມ (ເປັນທຸກ) ຜົນຂອງວະຈີທຸດຈະຣິດໃນພົບໜ້າເປັນຜົນຊົ່ວຊາມ ຜົນຂອງມະໂນທຸດຈະຣິດໃນພົບໜ້າເປັນຜົນຊົ່ວຊາມ ກໍຖ້າເຮົາເພິ່ງປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາປະພຶດຊົ່ວດ້ວຍໃຈ ຄວາມຊົ່ວບາງຢ່າງນັ້ນເພິ່ງເປັນເຫດໃຫ້ເຮົາຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ" ເຂົາຢ້ານຕໍ່ທຸກຄະຕິໄພຈຶ່ງລະກາຍທຸດຈະຣິດ ພໍ່າເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພໍ່າເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພໍ່າເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ທຸກຄະຕິໄພ

ພິກຂຸທັງຫຼາຍ ໄພ ໔ ປະການນີ້ແລ

**ອັດຕານຸວາທະສູດທີ ໑ ຈົບ**

# ៨. ອູມີພະຍະສູດ

## ວ່າດ້ວຍໄພຈາກຄື້ນ

[໑໒៨] ພິກຂຸທັງຫຼາຍ ໄພ ໔ ປະການນີ້ທີ່ຄົນລົງໄປໃນນ້ຳເພິ່ງປະສົບ

ໄພ ໔ ປະການ ອັນໃດແດ່ ຄື

໑. ອູມີໄພ (ໄພຈາກຄື້ນ) ໒. ກຸມພິລະໄພ (ໄພຈາກແຂ້)
໓. ອາວັດຕະໄພ (ໄພຈາກນ້ຳວົນ) ໔. ສຸສຸກາໄພ (ໄພຈາກປາຮ້າຍ)

ພິກຂຸທັງຫຼາຍ ໄພ ໔ ປະການນີ້ແລທີ່ຄົນລົງໄປໃນນ້ຳເພິ່ງປະສົບ ສັນໃດ

ພິກຂຸທັງຫຼາຍ ໄພ ໔ ປະການນີ້ກໍຄືກັນສັນນັ້ນແລ ທີ່ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນນີ້ເພິ່ງປະສົບ

ໄພ ໔ ປະການ ອັນໃດແດ່ ຄື

໑. ອູມີໄພ ໒. ກຸມພິລະໄພ
໓. ອາວັດຕະໄພ ໔. ສຸສຸກາໄພ

ອູມີໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນຫຍັງນໍ ການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດຈະເພິ່ງຜາກົດ" ເພື່ອນພົມມະຈາຣີຕັກເຕືອນພ່ຳສອນທ່ານຜູ້ບວດແລ້ວນັ້ນວ່າ "ທ່ານເພິ່ງກ້າວໄປແນວນີ້ ເພິ່ງຖອຍກັບແນວນີ້ ເພິ່ງແລເບິ່ງແນວນີ້ ເພິ່ງຫຼຽວເບິ່ງແນວນີ້ ເພິ່ງຄູ້ເຂົ້າແນວນີ້ ເພິ່ງຢຽດອອກແນວນີ້ ເພິ່ງຄອງສັງຄາຕິ ບາດ ແລະຈີວອນແນວນີ້" ທ່ານຄິດແນວນີ້ວ່າ "ແຕ່ກ່ອນເຮົາເປັນຄະລືຫັດ ມີແຕ່ຕັກເຕືອນພ່ຳສອນ ຜູ້ອື່ນ ກໍພິກຂຸເຫຼົ່ານີ້ມີອາຍຸລຸ້ນລູກ ລຸ້ນຫຼານຂອງເຮົາຍັງຈະມາຕັກເຕືອນພ່ຳສອນ" ທ່ານຂຸ່ນເຄືອງບໍ່ພໍໃຈ ບອກຄືນສິກຂາກັບມາເປັນຄະລືຫັດ ນີ້ຮຽກວ່າ ພິກຂຸຜູ້ຢ້ານອູມີໄພ ບອກຄືນສິກຂາກັບມາເປັນຄະລືຫັດ ຄຳວ່າ ອູມີໄພ ນີ້ເປັນຊື່ຮຽກຄວາມໂກດແລະຄວາມຄັບແຄ້ນໃຈ ນີ້ຮຽກວ່າ ອູມີໄພ

ກຸມພີລະໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນຫຍັງນໍການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດຈະເພິ່ງຜາກົດ" ເພື່ອນພົມມະຈາຣີຕັກເຕືອນພ່ຳສອນທ່ານຜູ້ບວດແລ້ວນັ້ນວ່າ "ສິ່ງນີ້ທ່ານເພິ່ງສັນ ສິ່ງນີ້ທ່ານບໍ່ເພິ່ງສັນ ສິ່ງນີ້ທ່ານເພິ່ງບໍຣິໂພກ ສິ່ງນີ້ທ່ານບໍ່ເພິ່ງບໍຣິໂພກ ສິ່ງນີ້ທ່ານເພິ່ງຊີມ ສິ່ງນີ້ທ່ານບໍ່ເພິ່ງຊີມ ສິ່ງນີ້ທ່ານເພິ່ງດື່ມ ສິ່ງນີ້ທ່ານບໍ່ເພິ່ງດື່ມ ສິ່ງເປັນກັບປິຍະ[1]ທ່ານເພິ່ງສັນ ສິ່ງເປັນອະກັບປິຍະ[2]ທ່ານບໍ່ເພິ່ງສັນ ສິ່ງເປັນກັບປິຍະທ່ານເພິ່ງບໍຣິໂພກ ສິ່ງເປັນອະກັບປິຍະທ່ານບໍ່ເພິ່ງບໍຣິໂພກ ສິ່ງເປັນກັບປິຍະທ່ານເພິ່ງຊີມ ສິ່ງເປັນອະກັບປິຍະທ່ານບໍ່ເພິ່ງຊີມ ສິ່ງເປັນກັບປິຍະທ່ານເພິ່ງດື່ມ ສິ່ງເປັນອະກັບປິຍະທ່ານບໍ່ເພິ່ງດື່ມ ທ່ານເພິ່ງສັນໃນເວລາ ທ່ານບໍ່ເພິ່ງສັນນອກເວລາ ທ່ານເພິ່ງບໍຣິໂພກໃນເວລາ ທ່ານບໍ່ເພິ່ງບໍຣິໂພກນອກເວລາ ທ່ານເພິ່ງຊີມໃນເວລາ ທ່ານບໍ່ເພິ່ງຊີມນອກເວລາ ທ່ານເພິ່ງດື່ມໃນເວລາ ທ່ານບໍ່ເພິ່ງດື່ມນອກເວລາ" ທ່ານຄິດແນວນີ້ວ່າ "ແຕ່ກ່ອນ ເຮົາເປັນຄະລິຫັດ ຫຍ້ຳກິນສິ່ງທີ່ເຮົາຕ້ອງການ ບໍ່ຫຍ້ຳກິນສິ່ງທີ່ເຮົາບໍ່ຕ້ອງການ ບໍຣິໂພກສິ່ງທີ່ເຮົາຕ້ອງການ ບໍ່ບໍຣິໂພກສິ່ງທີ່ເຮົາບໍ່ຕ້ອງການ ຊີມສິ່ງທີ່ເຮົາຕ້ອງການ ບໍ່ຊີມສິ່ງທີ່ເຮົາບໍ່ຕ້ອງການ ດື່ມສິ່ງທີ່ເຮົາຕ້ອງການ ບໍ່ດື່ມສິ່ງທີ່ເຮົາບໍ່ຕ້ອງການ ກິນທັງສິ່ງເປັນກັບປິຍະ ແລະສິ່ງເປັນອະກັບປິຍະ ບໍຣິໂພກທັງສິ່ງເປັນກັບປິຍະແລະສິ່ງເປັນອະກັບປິຍະ ຊີມທັງສິ່ງເປັນກັບປິຍະແລະສິ່ງເປັນອະກັບປິຍະ ດື່ມທັງສິ່ງເປັນກັບປິຍະແລະສິ່ງເປັນອະກັບປິຍະ ກິນທັງໃນເວລາ ແລະນອກເວລາ ບໍຣິໂພກທັງໃນເວລາແລະນອກເວລາ ຊີມທັງໃນເວລາແລະນອກເວລາ ດື່ມທັງໃນເວລາແລະນອກເວລາ ສິ່ງໃດທີ່ປະນີດບໍ່ວ່າຈະເປັນຂອງຫຍ້ຳຫຼືຂອງບໍຣິໂພກທີ່ຄະຫະບໍດີຜູ້ມີສັດທາຖວາຍແກ່ເຮົາທັງໃນເວລາແລະນອກເວລາ ພິກຂຸເຫຼົ່ານີ້ເຮັດຄືອັດປາກແມ່ນໃນສິ່ງຂອງເຫຼົ່ານັ້ນ" ທ່ານຂັດເຄືອງບໍ່ພໍໃຈ ບອກຄືນສິກຂາກັບມາເປັນຄະລິຫັດ ນີ້ຮຽກວ່າ ພິກຂຸຜູ້ຢ້ານກຸມພີລະໄພບອກຄືນສິກຂາກັບມາເປັນຄະລິຫັດ ຄຳວ່າ ກຸມພີລະໄພ ນີ້ເປັນຊື່ຮຽກຄວາມເປັນຄົນເຫັນແກ່ປາກທ້ອງ ນີ້ຮຽກວ່າ ກຸມພີລະໄພ

ອາວັດຕະໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນຫຍັງນໍການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດ" ທ່ານບວດຢູ່ແນວນີ້ ໃນເວລາເຊົ້າຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປບິນທະບາດຕາມໝູ່ບ້ານຫຼືເຂດ ບໍ່ຖືຮັກສາກາຍ ວາຈາ ໃຈ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານເຫັນຄະຫະບໍດີຫຼືບຸດຄະຫະບໍດີໃນໝູ່ບ້ານຫຼືເຂດນັ້ນ ເອີບອີ່ມ ພ້ອມພຽງ ປົນເປີຕົນຢູ່ດ້ວຍການມະຄຸນ ໕

ຄິດແນວນີ້ວ່າ "ແຕ່ກ່ອນເຮົາເປັນຄະລຶຫັດເອີບອີ່ມ ພ້ອມພຽງ ປົນເປີຕົນຢູ່ດ້ວຍກາມມະຄຸນ ໕ ໂພຄະຊັບໃນຕະກູນຂອງເຮົາກໍມີຢູ່ພ້ອມ ເຮົາສາມາດທີ່ຈະໃຊ້ສອຍໂພຄະຊັບແລະທຳບຸນໄດ້ທາງທີ່ດີ ເຮົາບອກຄືນສິກຂາກັບມາເປັນຄະລຶຫັດ ໃຊ້ສອຍໂພຄະຊັບແລະທຳບຸນ" ທ່ານບອກຄືນສິກຂາກັບມາ ເປັນຄະລຶຫັດ ນີ້ຮຽກວ່າ ພິກຂຸຜູ້ຢ້ານອາວັດຕະໄພບອກຄືນສິກຂາກັບມາເປັນຄະລຶຫັດ ຄຳວ່າ ອາວັດຕະໄພ ນີ້ເປັນຊື່ຮຽກກາມມະຄຸນ ໕ ນີ້ຮຽກວ່າ ອາວັດຕະໄພ

ສຸສຸກາໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນຫຍັງນໍການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດ" ທ່ານບວດຢູ່ແນວນີ້ ໃນເວລາເຊົ້າຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປບິນທະບາດຕາມໝູ່ບ້ານຫຼືເຂດ ບໍ່ຖືຮັກສາກາຍ ວາຈາ ໃຈ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານເຫັນມາຕຸຄາມ(ສະຕີ)ໃນໝູ່ບ້ານຫຼືເຂດນັ້ນນຸ່ງບໍ່ຮຽບຮ້ອຍ ຫຼືຫົ່ມບໍ່ຮຽບຮ້ອຍ ຣາຄະລົບກວນຈິດຂອງທ່ານຍ້ອນເຫັນມາຕຸຄາມນຸ່ງບໍ່ຮຽບຮ້ອຍຫຼື ຫົ່ມບໍ່ຮຽບຮ້ອຍ ທ່ານມີຈິດຟຸ້ງຊ່ານຍ້ອນຣາຄະ ຈຶ່ງບອກຄືນສິກຂາກັບມາເປັນຄະລຶຫັດ ນີ້ຮຽກວ່າ ພິກຂຸຜູ້ຢ້ານສຸສຸກາໄພບອກຄືນສິກຂາກັບມາເປັນຄະລຶຫັດ ຄຳວ່າ ສຸສຸກາໄພ ນີ້ເປັນຊື່ຮຽກມາຕຸຄາມ ນີ້ຮຽກວ່າ ສຸສຸກາໄພ

ພິກຂຸທັງຫຼາຍ ໄພ ໔ ປະການນີ້ແລທີ່ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນນີ້ເພິ່ງປະສົບ

**ອູມີພະຍະສູດທີ ໘ ຈົບ**

## ໙. ປະຖົມນານາກະຣະນະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ບຸກຄົນຕ່າງກັນ ສູດທີ ໑

[໑໘໙] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກອຢູ່ ເຂົາພໍໃຈປະຖົມຊານນັ້ນ ຕິດໃຈປະຖົມຊານນັ້ນ ແລະເຖິງຄວາມດີໃຈກັບປະຖົມຊານນັ້ນ ເຂົາດຳລົງຢູ່ໃນປະຖົມຊານນັ້ນ ນ້ອມໃຈໄປໃນປະຖົມຊານນັ້ນ ມັກຢູ່ກັບປະຖົມຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປ ຍ່ອມເຂົ້າ

ເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນໝູ່ພົມ ພວກເທວະດາຊັ້ນໝູ່ພົມມີອາຍຸປະມານ ໑ ກັບ໔ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນໝູ່ພົມນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດ ອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຣົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າ ດຳລົງຢູ່ໃນຊັ້ນໝູ່ພົມນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດ ອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນ ລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິ (ການຕາຍ) ແລະອຸບັດ(ການເກີດ)ຍັງມີຢູ່

໔. ບຸກຄົນລາງຄົນໃນໂລກນີ້ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ໖ ບໍ່ມີວິຕົກ ບໍ່ມີວິຈານ ມີປີຕິແລະສຸກເກີດຈາກສະມາທິຢູ່ ເຂົາພໍໃຈທຸຕິຍະຊານນັ້ນ ຕິດໃຈທຸຕິຍະຊານນັ້ນ ແລະເຖິງຄວາມດີໃຈກັບທຸຕິຍະຊານນັ້ນ ເຂົາດຳລົງຢູ່ໃນທຸຕິຍະຊານນັ້ນ ນ້ອມໃຈໄປໃນທຸຕິຍະຊານນັ້ນ ມັກຢູ່ກັບທຸຕິຍະຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນອາພັດສະ ພວກເທວະດາຊັ້ນອາພັດສະ ມີອາຍຸປະມານ ໔ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນອາພັດສະ ນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຣົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າ ດຳລົງຢູ່ໃນຊັ້ນອາພັດສະ ນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບ ພານ ໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໖. ບຸກຄົນລາງຄົນໃນໂລກນີ້ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ເຂົາພໍໃຈຕະຕິຍະຊານນັ້ນ ຕິດໃຈຕະຕິຍະຊານນັ້ນ ແລະເຖິງຄວາມດີໃຈກັບຕະຕິຍະຊານ ນັ້ນ ເຂົາດຳລົງຢູ່ໃນຕະຕິຍະຊານນັ້ນ ນ້ອມໃຈໄປໃນຕະຕິຍະຊານນັ້ນ ມັກຢູ່ກັບຕະຕິຍະຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນສຸພະກິນຫະ ພວກເທວະດາຊັ້ນສຸພະກິນຫະມີອາຍຸປະມານ ໔ ກັບ ຄົນທີ່ເປັນປຸຖຸຊົນ ດຳລົງຢູ່ໃນຊັ້ນສຸພະ ກິນຫະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາ ເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຣົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນສຸພະກິນຫະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາ ເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້

ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກ ຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໔. ບຸກຄົນລາງຄົນໃນໂລກນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຂົາພໍໃຈຈະຕຸດຖະຊານນັ້ນ ຕິດໃຈຈະຕຸດຖະຊານນັ້ນແລະເຖິງຄວາມດີໃຈກັບຈະຕຸດຖະຊານນັ້ນ ເຂົາດຳລົງຢູ່ໃນຈະຕຸດຖະຊານນັ້ນ ນ້ອມໃຈໄປໃນຈະຕຸດຖະຊານນັ້ນ ມັກຢູ່ກັບຈະຕຸດຖະຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນເວຫັບຜະລະ ພວກເທວະດາຊັ້ນເວຫັບຜະລະມີອາຍຸປະມານ ໕໐໐ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນເວຫັບຜະລະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນ ໝົດໄປແລ້ວໄປສູ່ນະຣົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນເວຫັບຜະລະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລເປັນຄວາມແປກກັນເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ປະຖົມນານາກະຣະນະສູດທີ ໓ ຈົບ**

## ໔. ທຸຕິຍະນານາກະຣະນະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ບຸກຄົນຕ່າງກັນ ສູດທີ ໔

[໑໘໔] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເຂົາພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນປະຖົມຊານນັ້ນໂດຍຄວາມບໍ່ທ່ຽງ ເປັນທຸກ ສຽບແທງ ເປັນດັ່ງຫົວຝີເປັນດັ່ງລູກສອນ ເປັນສິ່ງຄັບແຄ້ນ ບຽດບຽນ ບໍ່ເຊື່ອຟັງ ຕ້ອງແຕກສະ ຫຼາຍໄປ ວ່າງເປົ່າ ບໍ່ຢູ່ໃນອຳນາດຫຼັງຈາກຕາຍແລ້ວເຂົາຍ່ອມເຂົ້າເຖິງຄວາມເປັນ

ຜູ້ຢູ່ຮ່ວມກັບພວກເທວະດາຊັ້ນສຸດທາວາດ ການເຂົ້າ ເຖິງນີ້ບໍ່ແມ່ນມີຢູ່ທົ່ວໄປກັບປຸຖຸຊົນທັງຫຼາຍ

໔. ບຸກຄົນລາງຄົນໃນໂລກນີ້ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ຯລຯ

໓. ບຸກຄົນລາງຄົນໃນໂລກນີ້ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ

໔. ບຸກຄົນລາງຄົນໃນໂລກນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະ ໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ຯລຯ ຢູ່ ເຂົາພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນຈະຕຸດຖະຊານນັ້ນໂດຍຄວາມບໍ່ທ່ຽງ ເປັນທຸກ ສຽບແທງ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄັບແຄ້ນ ບຽດບຽນ ບໍ່ເຊື່ອຟັງ ຕ້ອງແຕກສະຫຼາຍໄປ ວ່າງເປົ່າ ບໍ່ຢູ່ໃນອຳນາດຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນສຸດທາວາດ ການເຂົ້າເຖິງນີ້ບໍ່ແມ່ນມີຢູ່ທົ່ວໄປກັບປຸຖຸຊົນທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ທຸຕິຍະນານາກະຣະນະສູດທີ ໔ ຈົບ**

## ໕. ປະຖົມເມດຕາສູດ

## ວ່າດ້ວຍຜູ້ມີເມດຕາຈິດ ສູດທີ ໑

[໑໘໕] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ມີເມດຕາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ[໑] ທິດເບື້ອງລ່າງ[໒] ທິດສຽງ[໓] ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ[໑] ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ແນວນີ້ ເຂົາພໍໃຈເມດຕາຊານນັ້ນ ຕິດໃຈເມດຕາຊານນັ້ນ ແລະເຖິງຄວາມດີໃຈກັບເມດຕາຊານນັ້ນ ເຂົາດຳລົງຢູ່ໃນເມດຕາຊານນັ້ນ ນ້ອມໃຈໄປໃນເມດຕາຊານນັ້ນ

ມັກຢູ່ກັບເມດຕາຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນໝູ່ພົມ ພວກເທວະດາຊັ້ນໝູ່ພົມມີອາຍຸປະມານ ໑ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນໝູ່ພົມນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນໝູ່ພົມນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານ ໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໒. ບຸກຄົນລາງຄົນໃນໂລກນີ້ມີກະລຸນາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍກະລຸນາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ແນວນີ້ ເຂົາພໍໃຈກະລຸນາຊານນັ້ນ ຕິດໃຈກະລຸນາຊານນັ້ນ ແລະເຖິງຄວາມດີໃຈກັບກະລຸນາຊານນັ້ນ ເຂົາດຳລົງຢູ່ໃນກະລຸນາຊານນັ້ນ ນ້ອມໃຈໄປໃນກະລຸນາຊານນັ້ນ ມັກຢູ່ກັບກະລຸນາຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນອາພັດສະ ພວກເທວະດາ ຊັ້ນອາພັດສະມີອາຍຸປະມານ ໒ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນອາພັດສະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນອາພັດສະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານ ໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໓. ບຸກຄົນລາງຄົນໃນໂລກນີ້ມີມຸທິຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍມຸທິຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ແນວນີ້ ເຂົາພໍໃຈມຸທິຕາຊານນັ້ນ ຕິດໃຈມຸທິຕາຊານນັ້ນ ແລະເຖິງຄວາມດີໃຈກັບມຸທິຕາຊານນັ້ນ ເຂົາດຳລົງຢູ່ໃນມຸທິຕາຊານນັ້ນ ນ້ອມໃຈໄປໃນມຸທິຕາຊານນັ້ນ ມັກຢູ່ກັບມຸທິຕາຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນສຸພະກິນຫະ ພວກເທວະດາຊັ້ນສຸພະກິນຫະມີອາຍຸປະມານ ໔ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນສຸພະກິນຫະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນ

ສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນສຸພະກິນຫະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາກຳນົດທີ່ເປັນອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານ ໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໔. ບຸກຄົນລາງຄົນໃນໂລກນີ້ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ແນວນີ້ ເຂົາພໍໃຈອຸເປກຂາຊານນັ້ນ ຕິດໃຈອຸເປກຂາຊານນັ້ນ ແລະເຖິງຄວາມດີໃຈກັບອຸເປກຂາຊານນັ້ນ ເຂົາດຳລົງຢູ່ໃນອຸເປກຂາຊານນັ້ນ ນ້ອມໃຈໄປໃນອຸເປກຂາຊານນັ້ນ ມັກຢູ່ກັບອຸເປກຂາຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນເວຫັບຜະລະ ພວກເທວະດາຊັ້ນເວຫັບຜະລະມີອາຍຸປະມານ ໕໐໐ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນ ເວຫັບຜະລະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາ ເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຣົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນເວຫັບຜະລະນັ້ນຈົນສິ້ນອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາ ເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກ ຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ປະຖົມເມດຕາສູດທີ ໕ ຈົບ**

## ໖. ທຸຕິຍະເມດຕາສູດ

## ວ່າດ້ວຍຜູ້ມີເມດຕາຈິດ ສູດທີ ໒

[໑໒໖] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່

ມີຄວາມບຽດບຽນຢູ່ແນວນີ້ ເຂົາພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນເມດຕາຈິດນັ້ນ ໂດຍຄວາມບໍ່ທ່ຽງ ເປັນທຸກ ສຽບແທງ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄັບແຄ້ນ ບຽດບຽນ ບໍ່ເຊື່ອຟັງ ຕ້ອງແຕກສະຫຼາຍໄປ ວ່າງເປົ່າ ບໍ່ຢູ່ໃນອຳນາດ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນສຸດທາວາດ ການເຂົ້າເຖິງນີ້ບໍ່ແມ່ນມີຢູ່ທົ່ວໄປກັບປຸຖຸຊົນທັງຫຼາຍ

໒. ບຸກຄົນລາງຄົນໃນໂລກນີ້ມີກະລຸນາຈິດ ຯລຯ

໓. ບຸກຄົນລາງຄົນໃນໂລກນີ້ມີມຸທິຕາຈິດ ຯລຯ

໔. ບຸກຄົນລາງຄົນໃນໂລກນີ້ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ແນວນີ້ ເຂົາພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນອຸເປກຂາຈິດນັ້ນໂດຍຄວາມບໍ່ທ່ຽງ ເປັນທຸກ ສຽບແທງ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄັບແຄ້ນ ບຽດບຽນ ບໍ່ເຊື່ອຟັງ ຕ້ອງແຕກສະຫຼາຍໄປ ວ່າງເປົ່າ ບໍ່ຢູ່ໃນອຳນາດ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາ ຊັ້ນສຸດທາວາດ ການເຂົ້າເຖິງນີ້ບໍ່ແມ່ນມີຢູ່ທົ່ວໄປກັບປຸຖຸຊົນທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ທຸຕິຍະເມດຕາສູດທີ ໖ ຈົບ**

## ໗. ປະຖົມຕະຖາຄົດອັດສະຣິຍະສູດ

### ວ່າດ້ວຍເຫດອັດສະຈັນຂອງພຣະຕະຖາຄົດ ສູດທີ ໑

[໑໒໗] ພິກຂຸທັງຫຼາຍ ເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການ ອັນໃດແດ່ ຄື

໑. ເມື່ອພຣະໂພທິສັດຈຸຕິຈາກສະຫວັນຊັ້ນດຸສິດມີສະຕິສຳປະຊັນຍະ ສະເດັດລົງສູ່ພຣະອຸທອນ ຂອງພຣະມານດາ ແສງສະຫວ່າງໂອລານປະມານບໍ່ໄດ້ ເກີນເລີຍອານຸພາບຂອງເທວະດາທັງຫຼາຍຍ່ອມຜາກົດຂຶ້ນໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ

ພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ແມ່ນແຕ່ໂລກັນຕະຣິກະນະຣົກເຊິ່ງເປີດຕະຫຼອດ ບໍ່ມີອັນໃດອັດກັ້ນ ມືດມິດ ແນມບໍ່ເຫັນອັນໃດໆ ທີ່ແສງສະຫວ່າງແຫ່ງດວງຈັນແລະດວງອາທິດ ອັນມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ຍັງສ່ອງໄປບໍ່ເຖິງ ແຕ່ແສງສະຫວ່າງໂອລານ ປະມານບໍ່ໄດ້ ລ່ວງເລີຍອານຸພາບຂອງເທວະດາທັງຫຼາຍຍ່ອມຜາກົດໃນໂລກັນຕະຣິກະນະຣົກນັ້ນ ແມ່ນພວກສັດທີ່ເກີດໃນໂລກັນຕະຣິກະນະຣົກນັ້ນຈື່ກັນແລະກັນໄດ້ຍ້ອນແສງສະຫວ່າງນັ້ນວ່າ "ທ່ານຜູ້ຈະເລີນ ຮູ້ວ່າ ສັດແມ່ນເຫຼົ່າອື່ນທີ່ເກີດໃນບ່ອນນີ້ມີຢູ່" ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດ ປະການທີ ໑ ຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

໔. ເມື່ອພຣະໂພທິສັດມີສະຕິສຳປະຊັນຍະ ປະສູດຈາກພຣະອຸທອນຂອງພຣະມານດາ ໗ລ໗ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໔ ຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

໓. ເມື່ອຕະຖາຄົດຊົງບັນລຸອະນຸດຕະຣະສຳມາສຳໂພທິຍານ ໗ລ໗ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໓ ຍ່ອມຜາກົດຍ້ອນຄວາມຜາກົດ ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

໔. ເມື່ອຕະຖາຄົດຊົງປະກາດທຳມະຈັກອັນປະເສີດ ແສງສະຫວ່າງໂອລານປະມານບໍ່ໄດ້ ເກີນເລີຍອານຸພາບຂອງເທວະດາທັງຫຼາຍຍ່ອມຜາກົດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ແມ່ນແຕ່ໂລກັນຕະຣິກະນະຣົກ ເຊິ່ງເປີດຕະຫຼອດ ບໍ່ມີອັນໃດອັດກັ້ນ ມືດມິດ ແນມບໍ່ເຫັນອັນໃດ ທີ່ແສງສະຫວ່າງແຫ່ງດວງຈັນແລະດວງອາທິດມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ຍັງສ່ອງໄປບໍ່ເຖິງ ແຕ່ແສງສະຫວ່າງໂອລານ ປະມານບໍ່ໄດ້ ລ່ວງເລີຍອານຸພາບຂອງເທວະດາທັງຫຼາຍຍ່ອມຜາກົດໃນໂລກັນຕະຣິກະນະຣົກນັ້ນ ແມ່ນພວກສັດທີ່ເກີດໃນໂລກັນຕະຣິກະນະຣົກນັ້ນຈື່ກັນແລະກັນໄດ້ຍ້ອນແສງສະຫວ່າງນັ້ນວ່າ "ທ່ານຜູ້ຈະເລີນ ຮູ້ວ່າ ສັດແມ່ນເຫຼົ່າອື່ນທີ່ເກີດໃນບ່ອນນີ້ ມີຢູ່" ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໔ ຍ່ອມຜາກົດ ຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ພິກຂຸທັງຫຼາຍ ເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການນີ້ແລຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

**ປະຖົມຕະຖາຄົດອັດສະຣິຍະສູດທີ ໗ ຈົບ**

# ໗. ທຸຕິຍະຕະຖາຄົດອັດສະຣິຍະສູດ

## ວ່າດ້ວຍເຫດອັດສະຈັນຂອງພຣະຕະຖາຄົດ ສູດທີ ໒

[໑໒໗] ພິກຂຸທັງຫຼາຍ ເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການ ອັນໃດແດ່ ຄື

໑. ໝູ່ສັດຜູ້ຍັງໝົກມຸ້ນໃນອາໄລ ຍິນດີໃນອາໄລ໌ ບັນເທີງໃນອາໄລ ເມື່ອຕະຖາຄົດສະແດງທຳທີ່ບໍ່ມີອາໄລກໍຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໑ ຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

໒. ໝູ່ສັດຜູ້ຍັງໝົກມຸ້ນໃນຄວາມຖືໂຕ ຍິນດີໃນຄວາມຖືໂຕ ບັນເທີງໃນຄວາມຖືໂຕ ເມື່ອຕະຖາຄົດສະແດງທຳທີ່ກຳຈັດຄວາມຖືໂຕກໍຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໒ ຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະ- ສຳມາສຳພຸດທະເຈົ້າ

໓. ໝູ່ສັດຜູ້ຍັງໝົກມຸ້ນໃນຄວາມບໍ່ສະຫງົບ ຍິນດີໃນຄວາມບໍ່ສະຫງົບ ບັນເທີງໃນຄວາມບໍ່ສະຫງົບ ເມື່ອຕະຖາຄົດສະແດງທຳທີ່ເປັນໄປເພື່ອຄວາມສະຫງົບ ກໍຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໓ ຍ່ອມຜາກົດຍ້ອນຄວາມຜາກົດຂອງຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ

໔. ໝູ່ສັດຜູ້ຍັງຕົກຢູ່ໃນອະວິດຊາເປັນຜູ້ມືດບອດ ຖືກອະວິດຊາຫຸ້ມຫໍ່ ເມື່ອຕະຖາຄົດສະແດງທຳທີ່ກຳຈັດອະວິດຊາ ກໍຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດປະການທີ ໔ ຍ່ອມຜາກົດ ຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ພິກຂຸທັງຫຼາຍ ນີ້ເປັນເຫດອັດສະຈັນບໍ່ເຄີຍຜາກົດ ໔ ປະການນີ້ແລຍ່ອມຜາກົດ ຍ້ອນຄວາມຜາກົດຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

**ທຸຕິຍະຕະຖາຄົດອັດສະຣິຍະສູດທີ ໗ ຈົບ**

## ໙. ອານັນທະອັດສະຣິຍະສູດ

### ວ່າດ້ວຍຄວາມເປັນອັດສະຣິຍະຂອງພຣະອານົນ

[໑໔໙] ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະ[1]ບໍ່ເຄີຍຜາກົດ ໔ ປະການນີ້ມີຢູ່ໃນ ອານົນ

ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການ ອັນໃດແດ່ ຄື

໑. ຖ້າພິກຂຸບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນ ສະແດງທຳໃນພິກຂຸບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ພິກຂຸບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຍຸດສະແດງ

໒. ຖ້າພິກຂຸນີບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນ ສະແດງທຳໃນພິກຂຸນີບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ພິກຂຸນີບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຍຸດສະແດງ

໓. ຖ້າອຸປາສົກບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນ ສະແດງທຳໃນ ອຸປາສົກບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສົກບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຍຸດສະແດງ

໔. ຖ້າອຸປາສິກາບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນ ສະແດງທຳໃນອຸປາສິກາບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສິກາບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຍຸດສະແດງ

ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການນີ້ແລ ມີຢູ່ໃນອານົນ

**ອານັນທະອັດສະຣິຍະສູດທີ ໙ ຈົບ**

## ໑໐. ຈັກກະວັດຕິອັດສະຣິຍະສູດ[1]

### ວ່າດ້ວຍຄວາມເປັນອັດສະຣິຍະຂອງພຣະເຈົ້າຈັກກະພັດ

[໑໓໐] ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການນີ້ມີຢູ່ໃນພຣະເຈົ້າຈັກກະພັດ

ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການ ອັນໃດແດ່ ຄື

໑. ຖ້າຂັດຕິຍະບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດຊະປະຕິສັນຖານໃນຂັດຕິຍະບໍລິສັດນັ້ນ ແມ່ນພຽງມີພຣະຣາຊະປະຕິສັນຖານກໍມີໃຈຍິນດີ ຂັດຕິຍະບໍລິສັດຍັງບໍ່ເຕັມອີ່ມ ເມື່ອພຣະເຈົ້າຈັກກະພັດຊົງງຽບ
໒. ຖ້າພາມມະນະບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດຊະປະຕິສັນຖານໃນພາມມະນະບໍລິສັດນັ້ນ ແມ່ນພຽງມີພຣະຣາດຊະປະຕິສັນຖານກໍມີໃຈຍິນດີ ພາມມະນະບໍລິສັດ ຍັງບໍ່ເຕັມອີ່ມ ເມື່ອພຣະເຈົ້າຈັກກະພັດຊົງງຽບ
໓. ຖ້າຄະຫະບໍດີບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດຊະປະຕິສັນຖານ ໃນຄະຫະບໍດີບໍລິສັດນັ້ນ ແມ່ນພຽງມີພຣະຣາດຊະ ປະຕິສັນຖານກໍມີໃຈຍິນດີ ຄະຫະບໍດີບໍລິສັດຍັງບໍ່ເຕັມອີ່ມ ເມື່ອພຣະເຈົ້າຈັກກະພັດຊົງງຽບ
໔. ຖ້າສະມະນະບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດຊະປະຕິສັນຖານໃນສະມະນະບໍລິສັດນັ້ນ ແມ່ນພຽງມີພຣະຣາດຊະປະຕິສັນຖານກໍມີໃຈຍິນດີ ສະມະນະບໍລິສັດຍັງບໍ່ເຕັມອີ່ມ ເມື່ອພຣະເຈົ້າຈັກກະພັດຊົງງຽບ

ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການນີ້ແລ ມີຢູ່ໃນພຣະເຈົ້າຈັກກະພັດ

ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການກໍຄືກັນສັນນັ້ນແລ ມີຢູ່ໃນອານົນ

ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການ ອັນໃດແດ່ ຄື

໑. ຖ້າພິກຂຸບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທໍາໃນ ພິກຂຸບໍລິສັດນັ້ນ ແມ່ນພຽງສະແດງທໍາກໍມີໃຈຍິນດີ ພິກຂຸບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຢຸດສະແດງ
໒. ຖ້າພິກຂຸນີບໍລິສັດ ຯລຯ
໓. ຖ້າອຸປາສົກບໍລິສັດ ຯລຯ
໔. ຖ້າອຸປາສິກາບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທໍາໃນອຸປາສິກາບໍລິສັດນັ້ນ ແມ່ນພຽງສະແດງທໍາກໍມີໃຈຍິນດີ ອຸປາສິກາບໍລິສັດຍັງບໍ່ເຕັມອີ່ມ ເມື່ອອານົນຢຸດສະແດງ

ພິກຂຸທັງຫຼາຍ ຄວາມເປັນອັດສະຣິຍະບໍ່ເຄີຍຜາກົດ ໔ ປະການນີ້ແລມີຢູ່ໃນອານົນ

**ຈັກກະວັດຕິອັດສະຣິຍະສູດທີ ໑໐ ຈົບ**

**ພະຍະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ອັດຕານຸວາທະສູດ
໒. ປະຖົມນານາກະຣະນະສູດ
໓. ປະຖົມເມດຕາສູດ
໔. ປະຖົມຕະຖາຄົດອັດສະຣິຍະສູດ
໕. ອານັນທະອັດສະຣິຍະສູດ
໖. ອູມິພະຍະສູດ
໗. ທຸຕິຍະນານາກະຣະນະສູດ
໘. ທຸຕິຍະເມດຕາສູດ
໙. ທຸຕິຍະຕະຖາຄົດອັດສະຣິຍະສູດ
໑໐. ຈັກກະວັດຕິອັດສະຣິຍະສູດ


# ໔. ປຸກຄະລະວັກ

## ໝວດວ່າດ້ວຍບຸກຄົນ

## ໑. ສັງໂຍຊະນະສູດ

### ວ່າດ້ວຍບຸກຄົນຜູ້ລະສັງໂຍດໄດ້

[໑໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ຍັງລະໂອຣຳພາຄີຍະສັງໂຍດ[๑] (ສັງໂຍດເບື້ອງຕ່ຳ) ບໍ່ໄດ້ລະສັງໂຍດ ທີ່ເປັນປັດໄຈແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບ[๒]ບໍ່ໄດ້

໒. ບຸກຄົນລາງຄົນໃນໂລກນີ້ລະໂອຣຳພາຄີຍະສັງໂຍດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

໓. ບຸກຄົນລາງຄົນໃນໂລກນີ້ລະໂອຣຳພາຄີຍະສັງໂຍດໄດ້ ແລະລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

໔. ບຸກຄົນລາງຄົນໃນໂລກນີ້ລະໂອຣຳພາຄີຍະສັງໂຍດໄດ້ ລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບໄດ້

ບຸກຄົນຈຳພວກໃດຍັງລະໂອຣຳພາຄິຍະສັງໂຍດບໍ່ໄດ້ ລະສັງໂຍດທີ່ເປັນປັດໄຈ ແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ຄື ພຣະສະກະທາຄາມີ ບຸກຄົນນີ້ແລຍັງລະໂອຣຳພາຄິຍະສັງໂຍດບໍ່ໄດ້ ລະສັງໂຍດທີ່ເປັນ ປັດໄຈແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ບຸກຄົນຈຳພວກໃດລະໂອຣຳພາຄິຍະສັງໂຍດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ຄື ພຣະອະນາຄາມີຜູ້ມຸ້ງໜ້າໄປສູ່ອະກະນິດຖະພົບ ບຸກຄົນນີ້ແລລະໂອຣຳພາຄິຍະສັງໂຍດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈແຫ່ງການເກີດບໍ່ໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ບຸກຄົນຈຳພວກໃດລະໂອຣຳພາຄິຍະສັງໂຍດໄດ້ ລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ຄື ພຣະອະນາຄາມີຜູ້ປະຣິນິບພານໃນລະຫວ່າງ ບຸກຄົນນີ້ແລລະໂອຣຳພາຄິຍະສັງໂຍດໄດ້ ລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແຕ່ຍັງລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບບໍ່ໄດ້

ບຸກຄົນຈຳພວກໃດລະໂອຣຳພາຄິຍະສັງໂຍດໄດ້ ລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບໄດ້

ຄື ພຣະອະຣະຫັນຜູ້ໝົດກິເລດ ບຸກຄົນນີ້ແລລະໂອຣຳພາຄິຍະສັງໂຍດໄດ້ ລະສັງໂຍດທີ່ເປັນປັດໄຈແຫ່ງການເກີດໄດ້ ແລະລະສັງໂຍດທີ່ເປັນປັດໄຈໃຫ້ໄດ້ພົບໄດ້

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ສັງໂຍຊະນະສູດທີ ໑ ຈົບ**

## ໘. ປະຕິພານສູດ

## ວ່າດ້ວຍບຸກຄົນຜູ້ຕອບໄດ້ຖືກຕ້ອງ

[໑໓໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ[໑] ພວກໃດແດ່ ຄື

໑. ບຸກຄົນຜູ້ຕອບໄດ້ຖືກຕ້ອງ ແຕ່ບໍ່ວ່ອງໄວ[໑]
໒. ບຸກຄົນຜູ້ຕອບໄດ້ວ່ອງໄວ ແຕ່ບໍ່ຖືກຕ້ອງ[໒]
໓. ບຸກຄົນຜູ້ຕອບໄດ້ຖືກຕ້ອງແລະວ່ອງໄວ
໔. ບຸກຄົນຜູ້ຕອບໄດ້ບໍ່ຖືກຕ້ອງແລະບໍ່ວ່ອງໄວ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຢາກົດຢູ່ໃນໂລກ

**ປະຕິພານະສູດທີ ໒ ຈົບ**

## ໓. ອຸກຄະຕິຕັນຍູສູດ

## ວ່າດ້ວຍບຸກຄົນຜູ້ເຂົ້າໃຈໄດ້ທັນທີ

[໑໓໓] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຢາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

| | |
|---|---|
| ໑. ອຸກຄະຕິຕັນຍູ[໑] | (ຜູ້ເຂົ້າໃຈໄດ້ທັນທີ) |
| ໒. ວິປະຈິຕັນຍູ[໒] | (ຜູ້ເຂົ້າໃຈຕໍ່ເມື່ອຂະຫຍາຍຄວາມ) |
| ໓. ເນີຍຍະ[໓] | (ຜູ້ທີ່ພໍຈະແນະນຳໄດ້) |
| ໔. ປະທະປະຣະມະ[໔] | (ຜູ້ທີ່ສອນໃຫ້ຮູ້ໄດ້ພຽງໂຕບົດຄືພະຍັນຊະນະ) |

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຢາກົດຢູ່ໃນໂລກ

**ອຸກຄະຕິຕັນຍູສູດທີ ໓ ຈົບ**

## ໔. ອຸດຖານະຜະລະສູດ

## ວ່າດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ

[໑໓໔] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຢາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ດຳລົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແຕ່ບໍ່ດຳລົງຊີບດ້ວຍຜົນແຫ່ງກຳ

໒. ບຸກຄົນຜູ້ດຳລົງຊີບດ້ວຍຜົນແຫ່ງກຳ ແຕ່ບໍ່ດຳລົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ
໓. ບຸກຄົນຜູ້ດຳລົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະດຳລົງຊີບດ້ວຍຜົນແຫ່ງກຳ
໔. ບຸກຄົນຜູ້ບໍ່ດຳລົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະບໍ່ດຳລົງຊີບດ້ວຍຜົນແຫ່ງກຳ[໒]

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

## ອຸດຖານະຜະລະສູດທີ ໔ ຈົບ

# ໕. ສາວັດຊະສູດ

## ວ່າດ້ວຍບຸກຄົນຜູ້ມີແຕ່ໂທດ

[໑໓໕] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ[໓] ພວກໃດແດ່ ຄື

໑. ບຸກຄົນຜູ້ມີແຕ່ໂທດ[໑]
໒. ບຸກຄົນຜູ້ມີໂທດເປັນສ່ວນຫຼາຍ[໒]
໓. ບຸກຄົນຜູ້ມີໂທດເປັນສ່ວນນ້ອຍ[໓]
໔. ບຸກຄົນຜູ້ບໍ່ມີໂທດ[໔]

ບຸກຄົນຜູ້ມີແຕ່ໂທດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳ (ການກະທຳທາງກາຍ) ທີ່ມີໂທດ ປະກອບດ້ວຍວະຈີກຳ (ການກະທຳທາງວາຈາ) ທີ່ມີໂທດ ປະກອບດ້ວຍມະໂນກຳ (ການກະທຳທາງໃຈ) ທີ່ມີໂທດ ບຸກຄົນຜູ້ມີແຕ່ໂທດ ເປັນແນວນີ້ແລ

ບຸກຄົນຜູ້ມີໂທດເປັນສ່ວນຫຼາຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍວະຈີກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍມະໂນກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ບຸກຄົນຜູ້ມີໂທດເປັນສ່ວນຫຼາຍ ເປັນແນວນີ້ແລ

ບຸກຄົນຜູ້ມີໂທດເປັນສ່ວນໜ້ອຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ບໍ່ມີໂທດເປັນສ່ວນຫຼາຍ ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍວະຈີກຳທີ່ບໍ່ມີໂທດເປັນສ່ວນຫຼາຍ ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍມະໂນກຳທີ່ບໍ່ມີໂທດເປັນສ່ວນຫຼາຍ ມີໂທດເປັນສ່ວນໜ້ອຍ ບຸກຄົນຜູ້ມີໂທດເປັນສ່ວນໜ້ອຍ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ມີໂທດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ບໍ່ມີໂທດ ປະກອບດ້ວຍ ວະຈີກຳທີ່ບໍ່ມີໂທດ ປະກອບດ້ວຍມະໂນກຳທີ່ບໍ່ມີໂທດ ບຸກຄົນຜູ້ບໍ່ມີໂທດ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ສາວັດຊະສູດທີ ໕ ຈົບ**

## ໖. ປະຖົມສີລະສູດ

### ວ່າດ້ວຍສີນ ສູດທີ ໑

[໑໓໖] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ບໍ່ພ່ຳເພັງສີນໃຫ້ບໍລິບູນ ບໍ່ພ່ຳເພັງສະມາທິໃຫ້ບໍລິບູນ ແລະບໍ່ພ່ຳເພັງປັນຍາໃຫ້ບໍລິບູນ[໑]
໒. ບຸກຄົນລາງຄົນໃນໂລກນີ້ພ່ຳເພັງສີນໃຫ້ບໍລິບູນ ແຕ່ບໍ່ພ່ຳເພັງສະມາທິໃຫ້ບໍລິບູນ ແລະບໍ່ພ່ຳເພັງປັນຍາໃຫ້ບໍລິບູນ[໒]
໓. ບຸກຄົນລາງຄົນໃນໂລກນີ້ພ່ຳເພັງສີນໃຫ້ບໍລິບູນ ແລະພ່ຳເພັງສະມາທິໃຫ້ບໍລິບູນ ແຕ່ບໍ່ພ່ຳເພັງປັນຍາໃຫ້ບໍລິບູນ[໓]
໔. ບຸກຄົນລາງຄົນໃນໂລກນີ້ພ່ຳເພັງສີນໃຫ້ບໍລິບູນ ພ່ຳເພັງສະມາທິໃຫ້ບໍລິບູນ ແລະພ່ຳເພັງປັນຍາໃຫ້ບໍລິບູນ[໔]

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ປະຖົມສີລະສູດທີ ໖ ຈົບ**

# ໗. ທຸຕິຍະສີລະສູດ

## ວ່າດ້ວຍສີນ ສູດທີ ໘

[໑໖໗] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ບໍ່ເຄົາລົບໃນສີນ ບໍ່ຖືສີນເປັນໃຫຍ່ ບໍ່ເຄົາລົບໃນສະມາທິ ບໍ່ຖືສະມາທິເປັນໃຫຍ່ ແລະບໍ່ເຄົາລົບໃນປັນຍາ ບໍ່ຖືປັນຍາເປັນໃຫຍ່
໒. ບຸກຄົນລາງຄົນໃນໂລກນີ້ເຄົາລົບໃນສີນ ຖືສີນເປັນໃຫຍ່ ແຕ່ບໍ່ເຄົາລົບໃນສະມາທິ ບໍ່ຖືສະມາທິເປັນໃຫຍ່ ແລະບໍ່ເຄົາລົບໃນປັນຍາ ບໍ່ຖືປັນຍາເປັນໃຫຍ່
໓. ບຸກຄົນລາງຄົນໃນໂລກນີ້ເຄົາລົບໃນສີນ ຖືສີນເປັນໃຫຍ່ ແລະເຄົາລົບໃນສະມາທິ ຖືສະມາທິເປັນໃຫຍ່ ແຕ່ບໍ່ເຄົາລົບໃນປັນຍາ ບໍ່ຖືປັນຍາເປັນໃຫຍ່
໔. ບຸກຄົນລາງຄົນໃນໂລກນີ້ເຄົາລົບໃນສີນ ຖືສີນເປັນໃຫຍ່ ເຄົາລົບໃນສະມາທິ ຖືສະມາທິເປັນໃຫຍ່ ແລະເຄົາລົບໃນປັນຍາ ຖືປັນຍາເປັນໃຫຍ່

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

### ທຸຕິຍະສີລະສູດທີ ໗ ຈົບ

# ໘. ນິກກັດຖະສູດ

## ວ່າດ້ວຍບຸກຄົນຜູ້ມີກາຍແລະຈິດອອກ

[໑໖໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ມີກາຍອອກ ແຕ່ມີຈິດຍັງບໍ່ອອກ[໑]
໒. ບຸກຄົນຜູ້ມີກາຍຍັງບໍ່ອອກ ແຕ່ມີຈິດອອກ
໓. ບຸກຄົນຜູ້ມີກາຍຍັງບໍ່ອອກແລະມີຈິດຍັງບໍ່ອອກ
໔. ບຸກຄົນຜູ້ມີກາຍອອກແລະມີຈິດອອກ

ບຸກຄົນຜູ້ມີກາຍອອກ ແຕ່ມີຈິດຍັງບໍ່ອອກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ອາໄສເສນາສະນະງຽບສະຫງັດ ຄື ປ່າໂປ່ງ[໒]ແລະປ່າທຶບ[໓] ທ່ານນຶກເຖິງກາມວິຕົກ (ຄວາມນຶກໃນທາງກາມ) ແດ່ ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ) ແດ່ ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ແດ່ ບຸກຄົນຜູ້ມີກາຍອອກ ແຕ່ມີຈິດຍັງບໍ່ອອກ ເປັນແນວນີ້ແລ

ບຸກຄົນຜູ້ມີກາຍຍັງບໍ່ອອກ ແຕ່ມີຈິດອອກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ອາໄສເສນາສະນະງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບເລີຍ ແຕ່ທ່ານນຶກເຖິງເນກຂຳມະວິຕົກ (ຄວາມນຶກປອດຈາກກາມ)ແດ່ ອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)ແດ່ ອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ)ແດ່ ບຸກຄົນຜູ້ມີກາຍຍັງບໍ່ອອກ ແຕ່ມີຈິດອອກ ເປັນແນວນີ້ແລ

ບຸກຄົນຜູ້ມີກາຍຍັງບໍ່ອອກແລະມີຈິດຍັງບໍ່ອອກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ອາໄສເສນາສະນະງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບ ແລະທ່ານນຶກເຖິງກາມວິຕົກແດ່ ພະຍາບາດວິຕົກແດ່ ວິຫິງສາວິຕົກແດ່ ບຸກຄົນຜູ້ມີກາຍຍັງບໍ່ອອກແລະມີ ຈິດຍັງບໍ່ອອກ ເປັນແນວນີ້ແລ

ບຸກຄົນຜູ້ມີກາຍອອກແລະມີຈິດອອກ ເປັນແນວໃດ?

ຄື ບຸກຄົນລາງໃນໂລກນີ້ອາໄສເສນາສະນະງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບ ແລະທ່ານນຶກເຖິງເນກຂຳມະວິຕົກແດ່ ອະພະຍາບາດວິຕົກແດ່ ອະວິຫິງສາວິຕົກແດ່ ບຸກຄົນຜູ້ມີກາຍອອກແລະມີຈິດອອກ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ນິກກັດຖະສູດທີ ໗ ຈົບ**

## ໘. ທຳມະກະຖຶກະສູດ

## ວ່າດ້ວຍທຳມະກະຖຶກ

[໑໓໘] ພິກຂຸທັງຫຼາຍ ທຳມະກະຖຶກ ໔ ຈຳພວກນີ້

ທຳມະກະຖຶກ ໔ ຈຳພວກ[໑] ພວກໃດແດ່ ຄື

໑. ທຳມະກະຖຶກລາງອົງໃນທຳວິໄນນີ້ກ່າວທຳໜ້ອຍແລະບໍ່ມີປະໂຫຍດ ທັງໝູ່ຜູ້ຟັງກໍບໍ່ສະຫຼາດໃນສິ່ງທີ່ມີປະໂຫຍດແລະບໍ່ມີປະໂຫຍດທຳມະກະຖຶກຈຳພວກນີ້ນັບວ່າເປັນທຳມະກະຖຶກສຳລັບ ໝູ່ຜູ້ຟັງປະເພດນີ້
໒. ທຳມະກະຖຶກລາງອົງໃນທຳວິໄນນີ້ກ່າວທຳໜ້ອຍແຕ່ມີປະໂຫຍດ ແລະ ໝູ່ຜູ້ຟັງກໍສະຫຼາດໃນສິ່ງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກ ຈຳພວກນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງປະເພດນີ້
໓. ທຳມະກະຖຶກລາງອົງໃນທຳວິໄນນີ້ກ່າວທຳຫຼາຍ ແຕ່ບໍ່ມີປະໂຫຍດ ແລະໝູ່ຜູ້ຟັງກໍບໍ່ສະຫຼາດໃນສິ່ງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກຈຳພວກນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງປະເພດນີ້
໔. ທຳມະກະຖຶກລາງອົງໃນທຳວິໄນນີ້ກ່າວທຳຫຼາຍແລະມີປະໂຫຍດ ແລະ ໝູ່ຜູ້ຟັງກໍສະຫຼາດໃນສິ່ງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກ ຈຳພວກນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງປະເພດນີ້

ພິກຂຸທັງຫຼາຍ ທຳມະກະຖຶກ ໔ ຈຳພວກນີ້ແລ

**ທຳມະກະຖຶກະສູດທີ ໙ ຈົບ**

## ໑໐. ວາທີສູດ

## ວ່າດ້ວຍນັກເວົ້າ

[໑໔໐] ພິກຂຸທັງຫຼາຍ ນັກເວົ້າ ໔ ຈຳພວກນີ້

ນັກເວົ້າ ໔ ຈຳພວກໃດແດ່ ຄື

໑. ນັກເວົ້າທີ່ຈົນດ້ານອັດຖະ ແຕ່ບໍ່ຈົນດ້ານພະຍັນຊະນະ
໒. ນັກເວົ້າທີ່ຈົນດ້ານພະຍັນຊະນະ ແຕ່ບໍ່ຈົນດ້ານອັດຖະ
໓. ນັກເວົ້າທີ່ຈົນທັງດ້ານອັດຖະແລະດ້ານພະຍັນຊະນະ
໔. ນັກເວົ້າທີ່ບໍ່ຈົນທັງດ້ານອັດຖະແລະດ້ານພະຍັນຊະນະ

ນັກເວົ້າ ໔ ຈຳພວກນີ້ແລ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸ(ນັກເວົ້າ)ຜູ້ປະກອບດ້ວຍປະຕິສຳພິທາ ໔ ປະການ ຈະເພິ່ງຈົນທັງດ້ານອັດຖະຫຼືດ້ານພະຍັນຊະນະ

**ວາທີສູດທີ ໑໐ ຈົບ**

**ປຸກຄະລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ສັງໂຍຊະນະສູດ
໒. ອຸກຄະຕິຕັນຍູສູດ
໓. ສາວັດຊະສູດ
໗. ທຸຕິຍະສີລະສູດ
໙. ທຳມະກະຖິກະສູດ
໔. ປະຕິພານະສູດ
໔. ອຸດຖານະຜະລະສູດ
໖. ປະຖົມສີລະສູດ
໘. ນິກກັດຖະສູດ
໑໐. ວາທີສູດ


# ໕. ອາພາວັກ

## ໝວດວ່າດ້ວຍແສງສະຫວ່າງ

## ໑. ອາພາສູດ

### ວ່າດ້ວຍແສງສະຫວ່າງ

[໑໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແສງສະຫວ່າງ ໔ ປະການນີ້ ແສງສະຫວ່າງ ໔ ປະການ ອັນໃດແດ່ ຄື

໑. ແສງສະຫວ່າງແຫ່ງດວງຈັນ
໒. ແສງສະຫວ່າງແຫ່ງດວງອາທິດ
໓. ແສງສະຫວ່າງແຫ່ງໄຟ
໔. ແສງສະຫວ່າງແຫ່ງປັນຍາ

ພິກຂຸທັງຫຼາຍ ແສງສະຫວ່າງ ໔ ປະການນີ້ແລ

ບັນດາແສງສະຫວ່າງ ໔ ປະການນີ້ ແສງສະຫວ່າງແຫ່ງປັນຍາເປັນເລີດ

**ອາພາສູດທີ ໑ ຈົບ**

## ໘. ປະພາສູດ

### ວ່າດ້ວຍຣັດສະໝີ

[໑໔໘] ພິກຂຸທັງຫຼາຍ ຣັດສະໝີ ໔ ປະການນີ້
ຣັດສະໝີ ໔ ປະການ ອັນໃດແດ່ ຄື

໑. ຣັດສະໝີແຫ່ງດວງຈັນ
໒.ຣັດສະໝີແຫ່ງດວງອາທິດ
໓. ຣັດສະໝີແຫ່ງໄຟ
໔. ຣັດສະໝີແຫ່ງປັນຍາ

ພິກຂຸທັງຫຼາຍ ຣັດສະໝີ ໔ ປະການນີ້ແລ

ບັນດາຣັດສະໝີ ໔ ປະການນີ້ ຣັດສະໝີແຫ່ງປັນຍາເປັນເລີດ

**ປະພາສູດທີ ໘ ຈົບ**

## ໙. ອາໂລກະສູດ

### ວ່າດ້ວຍຄວາມສະຫວ່າງ

[໑໔໙] ພິກຂຸທັງຫຼາຍ ຄວາມສະຫວ່າງ ໔ ປະການນີ້

ຄວາມສະຫວ່າງ ໔ ປະການ ອັນໃດແດ່ ຄື

໑. ຄວາມສະຫວ່າງແຫ່ງດວງຈັນ
໒. ຄວາມສະຫວ່າງແຫ່ງດວງອາທິດ
໓. ຄວາມສະຫວ່າງແຫ່ງໄຟ
໔. ຄວາມສະຫວ່າງແຫ່ງປັນຍາ

ພິກຂຸທັງຫຼາຍ ຄວາມສະຫວ່າງ ໔ ປະການນີ້ແລ

ບັນດາຄວາມສະຫວ່າງ ໔ ປະການນີ້ ຄວາມສະຫວ່າງແຫ່ງປັນຍາເປັນເລີດ

**ອາໂລກະສູດທີ ໙ ຈົບ**

# ໔. ໂອພາດສູດ

### ວ່າດ້ວຍຄວາມສະຫວ່າງສະໄຫວ

[໑໔໔] ພິກຂຸທັງຫຼາຍ ຄວາມສະຫວ່າງສະໄຫວ ໔ ປະການນີ້

ຄວາມສະຫວ່າງສະໄຫວ ໔ ປະການ ອັນໃດແດ່ ຄື

໑. ຄວາມສະຫວ່າງສະໄຫວແຫ່ງດວງຈັນ
໒. ຄວາມສະຫວ່າງສະໄຫວແຫ່ງດວງອາທິດ
໓. ຄວາມສະຫວ່າງສະໄຫວແຫ່ງໄຟ
໔. ຄວາມສະຫວ່າງສະໄຫວແຫ່ງປັນຍາ

ພິກຂຸທັງຫຼາຍ ຄວາມສະຫວ່າງສະໄຫວ ໔ ປະການນີ້ແລ

ບັນດາຄວາມສະຫວ່າງສະໄຫວ ໔ ປະການນີ້ຄວາມສະຫວ່າງສະໄຫວແຫ່ງປັນຍາເປັນເລີດ

**ໂອພາດສູດທີ ໔ ຈົບ**

# ໕. ປັດໂຊຕະສູດ

## ວ່າດ້ວຍຄວາມຮຸ່ງເຮືອງ

[໑໔໕] ພິກຂຸທັງຫຼາຍ ຄວາມຮຸ່ງເຮືອງ ໔ ປະການນີ້

ຄວາມຮຸ່ງເຮືອງ ໔ ປະການ ອັນໃດແດ່ ຄື

໑. ຄວາມຮຸ່ງເຮືອງແຫ່ງດວງຈັນ
໒. ຄວາມຮຸ່ງເຮືອງແຫ່ງດວງອາທິດ
໓. ຄວາມຮຸ່ງເຮືອງແຫ່ງໄຟ
໔. ຄວາມຮຸ່ງເຮືອງແຫ່ງປັນຍາ

ພິກຂຸທັງຫຼາຍ ຄວາມຮຸ່ງເຮືອງ ໔ ປະການນີ້ແລ

ບັນດາຄວາມຮຸ່ງເຮືອງ ໔ ປະການນີ້ ຄວາມຮຸ່ງເຮືອງແຫ່ງປັນຍາເປັນເລີດ

**ປັດໂຊຕະສູດທີ ໕ ຈົບ**

## ໕. ປະຖົມກາລະສູດ

### ວ່າດ້ວຍກາລ ສູດທີ ໑

[໑໔໕] ພິກຂຸທັງຫຼາຍ ກາລ ໔ ປະການນີ້

ກາລ ໔ ປະການ ອັນໃດແດ່ ຄື

໑. ການຟັງທຳຕາມກາລ[១]
໒. ການສົນທະນາທຳ໒ຕາມກາລ
໓. ຄວາມສະງົບໃຈຕາມກາລ
໔. ຄວາມເຫັນແຈ້ງຕາມກາລ

ພິກຂຸທັງຫຼາຍ ກາລ ໔ ປະການນີ້ແລ

### ປະຖົມກາລະສູດທີ ໕ ຈົບ

## ໖. ທຸຕິຍະກາລະສູດ

### ວ່າດ້ວຍກາລ ສູດທີ ໒

[໑໔໖] ພິກຂຸທັງຫຼາຍ ກາລ ໔ ປະການນີ້ທີ່ບຸກຄົນພ່ຳເພັງໂດຍຖືກຕ້ອງ ໃຫ້ໝຸນວຽນໄປຕາມໂດຍຖືກຕ້ອງ ຍ່ອມໃຫ້ເຖິງຄວາມໝົດສິ້ນອາສະວະຕາມລຳດັບ

ກາລ ໔ ປະການ ອັນໃດແດ່ ຄື

໑. ການຟັງທຳຕາມກາລ
໒. ການສົນທະນາທຳຕາມກາລ
໓. ຄວາມສະງົບໃຈຕາມກາລ
໔. ຄວາມເຫັນແຈ້ງຕາມກາລ

ກາລ ໔ ປະການນີ້ແລທີ່ບຸກຄົນພ່ຳເພັງໂດຍຖືກຕ້ອງ ໃຫ້ໝຸນວຽນໄປຕາມໂດຍຖືກຕ້ອງ ຍ່ອມໃຫ້ເຖິງຄວາມໝົດສິ້ນອາສະວະຕາມລຳດັບ

ປຽບຄືເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ນ້ຳໄຫຼໄປຕາມບ່ອນຫຼຸບເຮັດໃຫ້ຮ່ອມພູ ລຳທານ ແລະຫ້ວຍເຕັມ ຮ່ອມພູ ລຳທານ ແລະຫ້ວຍເຕັມແລ້ວເຮັດໃຫ້ໜອງເຕັມ ໜອງເຕັມ ແລ້ວ

ເຮັດໃຫ້ບຶງເຕັມ ບຶງເຕັມແລ້ວເຮັດໃຫ້ແມ່ນ້ຳນ້ອຍເຕັມ ແມ່ນ້ຳນ້ອຍເຕັມແລ້ວ ເຮັດໃຫ້ແມ່ນ້ຳໃຫຍ່ເຕັມ ແມ່ນ້ຳໃຫຍ່ເຕັມແລ້ວກໍເຮັດໃຫ້ມະຫາສະມຸດເຕັມ ແມ່ນສັນໃດ

ການ ໔ ປະການນີ້ກໍຄືກັນສັນນັ້ນ ທີ່ບຸກຄົນພໍ່າເພັງໂດຍຖືກຕ້ອງ ໃຫ້ໝູນວຽນໄປຕາມໂດຍຖືກຕ້ອງ ຍ່ອມໃຫ້ເຖິງຄວາມໝົດສິ້ນອາສະວະຕາມລຳດັບ

**ທຸຕິຍະການະສູດທີ ໗ ຈົບ**

## ໗. ທຸດຈະຣິຕະສູດ

**ວ່າດ້ວຍທຸດຈະຣິດ**

[໑໔໗] ພິກຂຸທັງຫຼາຍ ວະຈີທຸດຈະຣິດ ໔ ປະການນີ້

ວະຈີທຸດຈະຣິດ ໔ ປະການ ອັນໃດແດ່ ຄື

໑. ມຸສາວາທະ (ເວົ້າຕົວະ)
໒. ປິສຸນາວາຈາ (ເວົ້າສັບສໍ່)
໓. ຜະຣຸສະວາຈາ (ເວົ້າຄຳຫຍາບ)
໔. ສຳຜັບປະລາປະ (ເວົ້າບໍ່ມີສາຣະ)

ພິກຂຸທັງຫຼາຍ ວະຈີທຸດຈະຣິດ ໔ ປະການນີ້ແລ

**ທຸດຈະຣິຕະສູດທີ ໗ ຈົບ**

## ໘. ສຸດຈະຣິຕະສູດ

**ວ່າດ້ວຍສຸດຈະຣິດ**

[໑໔໘] ພິກຂຸທັງຫຼາຍ ວະຈີສຸດຈະຣິດ ໔ ປະການນີ້

ວະຈີສຸດຈະຣິດ ໔ ປະການ ອັນໃດແດ່ ຄື

໑. ສັດຈະວາຈາ (ເວົ້າຈິງ)
໒. ອະປິສຸນາວາຈາ (ເວົ້າບໍ່ສັບສໍ່)
໓. ສັນຫະວາຈາ (ເວົ້າອ່ອນຫວານ)

໔. ມັນຕະພາສາ৩ (ເວົ້າດ້ວຍປັນຍາ)

ພິກຂຸທັງຫຼາຍ ວະຈີສຸດຈະຣິດ ໔ ປະການນີ້ແລ

**ສຸດຈະຣິຕະສູດທີ ໙ ຈົບ**

## ໑໐. ສາຣະສູດ

## ວ່າດ້ວຍສາຣະທຳ

[໑໕໐] ພິກຂຸທັງຫຼາຍ ສາຣະທຳ (ທຳທີ່ເປັນແກ່ນສານ) ໔ ປະການນີ້

ສາຣະທຳ ໔ ປະການ ອັນໃດແດ່ ຄື

໑. ສີລະສາຣະທຳ৩ (ທຳທີ່ເປັນແກ່ນສານຄືສີນ)
໒. ສະມາທິສາຣະທຳ (ທຳທີ່ເປັນແກ່ນສານຄືສະມາທິ)
໓. ປັນຍາສາຣະທຳ (ທຳທີ່ເປັນແກ່ນສານຄືປັນຍາ)
໔. ວິມຸດຕິສາຣະທຳ (ທຳທີ່ເປັນແກ່ນສານຄືວິມຸດຕິ)

ພິກຂຸທັງຫຼາຍ ສາຣະທຳ ໔ ປະການນີ້ແລ

**ສາຣະສູດທີ ໑໐ ຈົບ**

**ອາພາວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາພາສູດ
໒. ປະພາສູດ
໓. ອາໂລກະສູດ
໔. ໂອພາດສູດ
໕. ປັດໂຊຕະສູດ
໖. ປະຖົມກາລະສູດ
໗. ທຸຕິຍະກາລະສູດ
໘. ທຸດຈະຣິຕະສູດ
໙. ສຸຈະຣິຕະສູດ
໑໐. ສາຣະສູດ

**ຕະຕິຍະປັນນາດ ຈົບ**

# ໔. ຈະຕຸດຖະປັນນາດ

## ໑. ອິນທະຣິຍະວັກ

### ໝວດວ່າດ້ວຍອິນຊີ

## ໑. ອິນທະຣິຍະສູດ

### ວ່າດ້ວຍອິນຊີ

[໑໕໑] ພິກຂຸທັງຫຼາຍ ອິນຊີ ໔ ປະການນີ້

ອິນຊີ ໔ ປະການ ອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະມາທິນຊີ (ອິນຊີຄືສະມາທິ)
໔. ປັນຍິນຊີ (ອິນຊີຄືປັນຍາ)

ພິກຂຸທັງຫຼາຍ ອິນຊີ ໔ ປະການນີ້ແລ

**ອິນທະຣິຍະສູດທີ ໑ ຈົບ**

## ໒. ສັດທາພະລະສູດ

### ວ່າດ້ວຍສັດທາພະລະ

[໑໕໒] ພິກຂຸທັງຫຼາຍ ພະລະ (ກຳລັງ) ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ວິຣິຍະພະລະ (ກຳລັງຄືວິຣິຍະ)
໓. ສະມາທິພະລະ (ກຳລັງຄືສະມາທິ)

໔. ປັນຍາພະລະ (ກຳລັງຄືປັນຍາ)

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ

**ສັດທາພະລະສູດທີ ໒ ຈົບ**

## ໓. ປັນຍາພະລະສູດ

## ວ່າດ້ວຍປັນຍາພະລະ

[໑໕໓] ພິກຂຸທັງຫຼາຍ ພະລະ (ກຳລັງ) ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ປັນຍາພະລະ (ກຳລັງຄືປັນຍາ)
໒. ວິຣິຍະພະລະ (ກຳລັງຄືວິຣິຍະ)
໓. ອະນະວັດຊະພະລະ (ກຳລັງຄືກຳທີ່ບໍ່ມີໂທດ)
໔. ສັງຄະຫະພະລະ (ກຳລັງຄືການສົງເຄາະ)

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ

**ປັນຍາພະລະສູດທີ ໓ ຈົບ**

## ໔. ສະຕິພະລະສູດ

## ວ່າດ້ວຍສະຕິພະລະ

[໑໕໔] ພິກຂຸທັງຫຼາຍ ພະລະ ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ສະຕິພະລະ (ກຳລັງຄືສະຕິ)
໒. ສະມາທິພະລະ (ກຳລັງຄືສະມາທິ)
໓. ອະນະວັດຊະພະລະ (ກຳລັງຄືກຳທີ່ບໍ່ມີໂທດ)
໔. ສັງຄະຫະພະລະ (ກຳລັງຄືການສົງເຄາະ)

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ

**ສະຕິພະລະສູດທີ ໔ ຈົບ**

## ໕. ປະຕິສັງຂານະພະລະສູດ

### ວ່າດ້ວຍປະຕິສັງຂານະພະລະ

[໑໕໕] ພິກຂຸທັງຫຼາຍ ພະລະ ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ປະຕິສັງຂານະພະລະ (ກຳລັງຄືການພິຈາລະນາ)
໒. ພາວະນາພະລະ (ກຳລັງຄືການຈະເລີນ)
໓. ອະນະວັດຊະພະລະ (ກຳລັງຄືກຳທີ່ບໍ່ມີໂທດ)
໔. ສັງຄະຫະພະລະ (ກຳລັງຄືການສົງເຄາະ)

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ

**ປະຕິສັງຂານະພະລະສູດທີ ໕ ຈົບ**

## ໖. ກັບປະສູດ

### ວ່າດ້ວຍກັບ

[໑໕໖] ພິກຂຸທັງຫຼາຍ ອະສົງໄຂຍະກັບ ໔ ປະການນີ້

ອະສົງໄຂຍະກັບ ໔ ປະການ ອັນໃດແດ່ ຄື

໑. ໃນເວລາທີ່ສັງວັດຕະກັບ[1]ດຳເນີນໄປ ບໍ່ມີໃຜກຳນົດນັບໄດ້ວ່າ ຈຳນວນທໍ່ນີ້ຫຼາຍປີ ຈຳນວນທໍ່ນີ້ ໑໐໐ ປີ ຈຳນວນທໍ່ນີ້ ໑,໐໐໐ ປີ ຫຼື ຈຳນວນທໍ່ນີ້ ໑໐໐,໐໐໐ ປີ
໒. ໃນເວລາທີ່ສັງວັດຕະຖາຍີກັບ[2]ດຳເນີນໄປ ບໍ່ມີໃຜກຳນົດນັບໄດ້ວ່າ ຈຳນວນທໍ່ນີ້ຫຼາຍປີ ຈຳນວນທໍ່ນີ້ ໑໐໐ ປີ ຈຳນວນທໍ່ນີ້ ໑,໐໐໐ ປີ ຫຼືຈຳນວນທໍ່ນີ້ ໑໐໐,໐໐໐ ປີ

໓. ໃນເວລາທີ່ວິວັດຕະກັບ[3]ດຳເນີນໄປ ບໍ່ມີໃຜກຳນົດນັບໄດ້ວ່າ ຈຳນວນທໍ່ນີ້ ຫຼາຍປີ ຈຳນວນທໍ່ນີ້ ໑໐໐ ປີ ຈຳນວນທໍ່ນີ້ ໑,໐໐໐ ປີ ຫຼືຈຳນວນທໍ່ນີ້ ໑໐໐,໐໐໐ ປີ

໔. ໃນເວລາທີ່ວິວັດຕະຖາຍີກັບ[4]ດຳເນີນໄປ ບໍ່ມີໃຜກຳນົດນັບໄດ້ວ່າ ຈຳນວນທໍ່ນີ້ຫຼາຍປີ ຈຳນວນທໍ່ນີ້ ໑໐໐ ປີ ຈຳນວນທໍ່ນີ້ ໑,໐໐໐ ປີ ຫຼືຈຳນວນທໍ່ນີ້ ໑໐໐,໐໐໐ ປີ

ພິກຂຸທັງຫຼາຍ ອະສົງໄຂຍະກັບ ໔ ປະການນີ້ແລ

**ກັບປະສູດທີ ໖ ຈົບ**

## ៗ. ໂຣຄະສູດ

## ວ່າດ້ວຍພະຍາດ

[໑໕៧] ພິກຂຸທັງຫຼາຍ ພະຍາດ ໒ ຢ່າງນີ້

ພະຍາດ ໒ ຢ່າງ ອັນໃດແດ່ ຄື

໑. ພະຍາດທາງກາຍ
໒. ພະຍາດທາງໃຈ

ສັດຜູ້ອ້າງວ່າ ຕົນເອງບໍ່ມີພະຍາດທາງກາຍຕະຫຼອດໄລຍະເວລາ ໑ ປີແດ່ ໒ ປີແດ່ ໓ ປີ ແດ່ ໔ ປີແດ່ ໕ ປີແດ່ ໑໐ ປີແດ່ ໒໐ ປີແດ່ ໓໐ ປີແດ່ ໔໐ ປີແດ່ ໕໐ ປີແດ່ ແມ່ນຍິ່ງກວ່າ ໑໐໐ ປີແດ່ ຍັງພໍມີຢູ່ ແຕ່ສັດຜູ້ຈະກ່າວອ້າງວ່າ ຕົນເອງບໍ່ມີພະຍາດທາງໃຈ ຕະຫຼອດໄລຍະເວລາແມ່ນບຶດດຽວ ຫາໄດ້ໂດຍຍາກ ຍົກເວັ້ນທ່ານຜູ້ໝົດກິເລດແລ້ວ

ພິກຂຸທັງຫຼາຍ ພະຍາດຂອງບັນພະຊິດ ໔ ແນວນີ້

ພະຍາດ ໔ ຢ່າງ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ເປັນຄົນມັກຫຼາຍ ຄັບແຄ້ນ ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້

໔. ທ່ານເມື່ອມັກຫຼາຍ ຄັບແຄ້ນ ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ຍ່ອມຕັ້ງຄວາມປາຖະໜາ ຊົ່ວເພື່ອບໍ່ໃຫ້ຜູ້ອື່ນດູໝິ່ນ ເພື່ອໃຫ້ໄດ້ລາບສັກກາຣະແລະຊື່ສຽງ

໕. ທ່ານແລ່ນເຕັ້ນ ຂົນຂວາຍ ພະຍາຍາມເພື່ອບໍ່ໃຫ້ຜູ້ອື່ນດູໝິ່ນ ເພື່ອໃຫ້ໄດ້ລາບສັກກາຣະແລະຊື່ສຽງ

໔. ທ່ານເຂົ້າໄປຫາຕະກູນທັງຫຼາຍ ນັ່ງກ່າວທຳ ກັ້ນອຸດຈາຣະແລະປັດສາວະເພື່ອໃຫ້ເຂົານັບຖື

ພິກຂຸທັງຫຼາຍ ພະຍາດຂອງບັນພະຊິດ ໔ ຢ່າງນີ້ແລ

ຍ້ອນເຫດນັ້ນ ທ່ານທັງຫຼາຍໃນທຳວິໄນນີ້ເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາຈັກບໍ່ເປັນຄົນມັກຫຼາຍ ບໍ່ເປັນຄົນມີຈິດຄັບແຄ້ນ ບໍ່ເປັນຄົນບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະ ປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ເຮົາຈັກບໍ່ຕັ້ງຄວາມປາຖະໜາຊົ່ວ ເພື່ອໃຫ້ຄົນອື່ນຮູ້ຈັກ ເພື່ອໃຫ້ໄດ້ລາບສັກກາຣະແລະຊື່ສຽງ ເຮົາຈັກບໍ່ແລ່ນເຕັ້ນ ບໍ່ຂົນຂວາຍ ບໍ່ພະຍາຍາມເພື່ອໃຫ້ຄົນອື່ນຮູ້ຈັກ ເພື່ອໃຫ້ໄດ້ລາບສັກກາຣະແລະຊື່ສຽງ ເຮົາຈັກອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ຕໍ່ການຖືກເຮືອດ ຍຸງ ລົມ ແດດ ແລະສັດເລືອຄານທັງຫຼາຍລົບກວນ ຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ຈັກເປັນຜູ້ອົດກັ້ນເວທະນາທັງຫຼາຍອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວ ເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ”

ພິກຂຸທັງຫຼາຍ ພວກທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

**ໂຣຄະສູດທີ ໗ ຈົບ**

## ໘. ປະຣິຫານີສູດ

## ວ່າດ້ວຍທຳທີ່ເປັນເຫດເສື່ອມ

[໑໕໘] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຈະເປັນພິກຂຸຫຼືພິກຂຸນີກໍຕາມ ພິຈາລະນາເຫັນທຳ ໔ ປະການຢູ່ໃນຕົນ ເພິ່ງແນ່ໃຈໄດ້ເລີຍວ່າ ຈະເສື່ອມຈາກກຸສົນທຳທັງຫຼາຍ ຍ້ອນການມີ ທຳ ໔ ປະການຢູ່ໃນຕົນນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ມີຄວາມເສື່ອມ

ທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຣາຄະໜາ
໒. ຄວາມເປັນຜູ້ມີໂທສະໜາ
໓. ຄວາມເປັນຜູ້ມີໂມຫະໜາ
໔. ບໍ່ມີປັນຍາຈັກຂຸ໌ໃນເລື້ອງທີ່ຄວນແລະບໍ່ຄວນອັນເລິກເຊິ່ງ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຈະເປັນພິກຂຸຫຼືພິກຂຸນີກໍຕາມ ພິຈາລະນາເຫັນທຳ ໔ ປະການນີ້ຢູ່ໃນຕົນ ເພິ່ງແນ່ໃຈໄດ້ວ່າ ຈະເສື່ອມຈາກກຸສົນທຳທັງຫຼາຍ ຍ້ອນການມີ ທຳ ໔ ປະການຢູ່ໃນຕົນນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ມີຄວາມເສື່ອມ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຈະເປັນພິກຂຸຫຼືພິກຂຸນີກໍຕາມ ພິຈາລະນາເຫັນທຳ ໔ ປະການຢູ່ໃນຕົນ ເພິ່ງແນ່ໃຈໄດ້ວ່າ ຈະບໍ່ເສື່ອມຈາກກຸສົນທຳທັງຫຼາຍ ຍ້ອນການມີທຳ ໔ ປະການຢູ່ໃນຕົນນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ບໍ່ມີຄວາມເສື່ອມ

ທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຣາຄະເບົາບາງ
໒. ຄວາມເປັນຜູ້ມີໂທສະເບົາບາງ
໓. ຄວາມເປັນຜູ້ມີໂມຫະເບົາບາງ
໔. ມີປັນຍາຈັກຂຸໃນເລື້ອງທີ່ຄວນແລະບໍ່ຄວນອັນເລິກເຊິ່ງ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຈະເປັນພິກຂຸຫຼືພິກຂຸນີກໍຕາມ ພິຈາລະນາເຫັນທຳ ໔ ປະການນີ້ຢູ່ໃນຕົນ ເພິ່ງແນ່ໃຈໄດ້ວ່າ ບໍ່ເສື່ອມຈາກກຸສົນທຳທັງຫຼາຍ ຍ້ອນການມີທຳ ໔ ປະການຢູ່ໃນຕົນນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ບໍ່ມີຄວາມເສື່ອມ

**ປະຣິຫານີສູດທີ ໘ ຈົບ**

## ໙. ພິກຂຸນີສູດ

## ວ່າດ້ວຍພິກຂຸນີ

[໑໕໙] ສະໄໝໜຶ່ງ ທ່ານພຣະອານົນຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ພິກຂຸນີອົງໜຶ່ງ ຮຽກຊາຍຄົນໜຶ່ງມາບອກວ່າ "ທ້າວຜູ້ຈະເລີນ ມານີ້ ທ່ານຈົ່ງເຂົ້າໄປຫາ ພຣະຜູ້ເປັນເຈົ້າອານົນຮອດບ່ອນຢູ່ ຂາບຕີນທ່ານດ້ວຍຂະໜ່ອມຕາມຄຳຂອງເຮົາ ຮຽນວ່າ "ຂ້າແດ່ທ່ານຜູ້ຈະເລີນ ພິກຂຸນີຊື່ນີ້ອາພາດ ມີທຸກ ເປັນໄຂ້ໜັກ ນາງຂໍຂາບຕີນພຣະຜູ້ເປັນເຈົ້າອານົນ" ແລະຈົ່ງ

ຮຽນແບບນີ້ວ່າ "ຂ້າແດ່ທ່ານຜູ້ຈະເລີນ ຂໍໂອກາດ ຂໍພຣະຜູ້ເປັນເຈົ້າອານົນໄດ້ໂຜດອະນຸເຄາະ ເຂົ້າໄປຫາພິກຂຸນີນັ້ນຍັງສຳນັກຂອງພິກຂຸນີດ້ວຍເທີ້ນ"

ບຸຣຸດນັ້ນ ຮັບຄຳແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນທ່ານພຣະອານົນວ່າ

"ຂ້າແດ່ທ່ານຜູ້ຈະເລີນ ພິກຂຸນີຊື່ນີ້ອາພາດ ມີທຸກ ເປັນໄຂ້ໜັກ ນາງຂໍຂາບຕີນພຣະຜູ້ເປັນເຈົ້າອານົນດ້ວຍຂະໜ່ອມ" ແລະຮຽນແບບນີ້ວ່າ "ຂ້າແດ່ ທ່ານຜູ້ຈະເລີນ ຂໍໂອກາດ ຂໍພຣະຜູ້ເປັນເຈົ້າອານົນໄດ້ໂຜດອະນຸເຄາະ ເຂົ້າໄປຫາພິກຂຸນີນັ້ນຍັງສຳນັກຂອງພິກຂຸນີດ້ວຍເທີ້ນ"

ທ່ານພຣະອານົນຮັບໂດຍດຸດສະນີພາບ

ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ[໑] ເຂົ້າໄປຫາພິກຂຸນີນັ້ນ ທີ່ສຳນັກຂອງພິກຂຸນີ ພິກຂຸນີນັ້ນ ເຫັນທ່ານພຣະອານົນມາແຕ່ໄກ ນອນຄຸມຫົວຢູ່ເທິງຕຽງ

ລຳດັບນັ້ນ ໃນເວລາເຊົ້າ ທ່ານພຣະອານົນເຂົ້າໄປຫາພິກຂຸນີນັ້ນຮອດບ່ອນຢູ່ ນັ່ງເທິງອາດສະນະທີ່ປູລາດໄວ້ ໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ

"ນາງ ກາຍນີ້ເກີດຂຶ້ນຍ້ອນອາຫານ ບຸກຄົນອາໄສອາຫານ[໒]ແລ້ວເພິ່ງລະອາຫານ[໓]ສາ ກາຍນີ້ເກີດຂຶ້ນຍ້ອນຕັນຫາ ບຸກຄົນອາໄສຕັນຫາ[໔]ແລ້ວເພິ່ງລະຕັນຫາ[໔]ສາ ກາຍນີ້ເກີດຂຶ້ນຍ້ອນມານະ ບຸກຄົນອາໄສມານະແລ້ວເພິ່ງລະມານະສາ ກາຍນີ້ເກີດຂຶ້ນຍ້ອນເມຖຸນແລະການຂ້າປັດໃຈແຫ່ງເມຖຸນດ້ວຍ ອະຣິຍະມັກ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ

ນາງ ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ກາຍນີ້ເກີດຂຶ້ນຍ້ອນອາຫານ ບຸກຄົນອາໄສອາຫານແລ້ວເພິ່ງລະອາຫານສາ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນາງ ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວຈຶ່ງສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ສັນພຽງເພື່ອຄວາມດຳລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນໂດຍຄິດເຫັນວ່າ "ເຮົາຈັກກຳຈັດເວທະນາເກົ່າແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະຄວາມຢູ່ຜາສຸກຈັກມີແກ່ເຮົາ" ທ່ານອາໄສອາຫານແລ້ວພາຍຫຼັງ ຈຶ່ງລະອາຫານໄດ້

ນາງ ຂໍ້ທີ່ເຮົາກ່າວວ່າ "ກາຍນີ້ເກີດຂຶ້ນຍ້ອນອາຫານ ບຸກຄົນອາໄສອາຫານແລ້ວເພິ່ງລະອາຫານສາ" ເຮົາກ່າວຍ້ອນອາໄສເຫດນີ້

ນາງ ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ກາຍນີ້ເກີດຂຶ້ນຍ້ອນຕັນຫາ ບຸກຄົນອາໄສ ຕັນຫາແລ້ວເພິ່ງລະຕັນຫາສາ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນາງ ພິກຂຸໃນທຳວິໄນນີ້ຟັງຂ່າວວ່າ "ພິກຂຸຊື່ນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ[9] ປັນຍາວິມຸດຕິ[6]ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປນຳປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານມີຄວາມຄິດແນວນີ້ວ່າ "ເມື່ອໃດນໍ ແມ່ນເຮົາກໍຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານອາໄສຕັນຫາ ແລ້ວພາຍຫຼັງຈຶ່ງລະຕັນຫາໄດ້

ນາງ ຂໍ້ທີ່ເຮົາກ່າວວ່າ "ກາຍນີ້ເກີດຂຶ້ນຍ້ອນຕັນຫາ ບຸກຄົນອາໄສຕັນຫາແລ້ວເພິ່ງລະຕັນຫາສາ" ເຮົາກ່າວຍ້ອນອາໄສເຫດນີ້

ນາງ ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ກາຍນີ້ເກີດຂຶ້ນຍ້ອນມານະ ບຸກຄົນອາໄສມານະແລ້ວເພິ່ງລະມານະສາ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນາງ ພິກຂຸໃນທຳວິໄນນີ້ຟັງຂ່າວວ່າ "ພິກຂຸຊື່ນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານມີຄວາມຄິດແນວນີ້ວ່າ "ກໍທ່ານຜູ້ມີອາຍຸນັ້ນເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເປັນຫຍັງເຮົາຈັກເຮັດໃຫ້ແຈ້ງແດ່ບໍ່ໄດ້" ທ່ານອາໄສມານະແລ້ວພາຍຫຼັງຈຶ່ງລະມານະໄດ້

ນາງ ຂໍ້ທີ່ເຮົາກ່າວວ່າ "ກາຍນີ້ເກີດຂຶ້ນຍ້ອນມານະ ບຸກຄົນອາໄສມານະແລ້ວເພິ່ງລະມານະສາ" ເຮົາກ່າວຍ້ອນອາໄສເຫດນີ້

ນາງ ກາຍນີ້ເກີດຂຶ້ນຍ້ອນເມຖຸນແລະການຂ້າປັດໄຈແຫ່ງເມຖຸນດ້ວຍອະຣິຍະມັກພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ"

ລຳດັບນັ້ນແລ ພິກຂຸນີນັ້ນລຸກຈາກຕຽງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ໝອບລົງແທບຕີນຂອງທ່ານພຣະອານົນດ້ວຍຂະໝ່ອມ ໄດ້ຮຽນທ່ານພຣະອານົນວ່າ "ຂ້າແດ່ ທ່ານຜູ້ຈະເລີນ ຂ້ານ້ອຍເປັນຄົນຈ້ຳ ຄົນຫຼົງ ບໍ່ສະຫຼາດ ໄດ້ລ່ວງເກີນໄປແລ້ວ ຂໍພຣະຜູ້ເປັນເຈົ້າ ອານົນໂຜດຍົກໂທດໃຫ້ຂ້ານ້ອຍຜູ້ເຮັດແນວນີ້ ເພື່ອໃຫ້ສັງລວມລະວັງຕໍ່ໄປ"

ທ່ານພຣະອານົນກ່າວວ່າ "ບໍ່ເປັນຫຍັງດອກ ນາງ ທ່ານເປັນຄົນຈ້ຳ ຄົນຫຼົງ ບໍ່ສະຫຼາດຈຶ່ງໄດ້ລ່ວງເກີນໄປແລ້ວ ເມື່ອທ່ານຜູ້ເຮັດແນວນີ້ ເຫັນໂທດໂດຍຄວາມເປັນໂທດແລ້ວ ເຮັດຄືນຕາມທຳ ເຮົາຍົກໂທດໃຫ້ທ່ານ ນາງ ການທີ່ບຸກຄົນເຫັນໂທດແລ້ວເຮັດຄືນຕາມທຳ ສັງລວມລະວັງຕໍ່ໄປນີ້ເປັນຄວາມຈະເລີນໃນອະຣິຍະວິໄນ"

**ພິກຂຸນີສູດທີ ໗ ຈົບ**

# ໑໐. ສຸຄະຕະວິນະຍະສູດ

## ວ່າດ້ວຍພຣະສຸຄົດເຈົ້າແລະວິໄນຂອງພຣະສຸຄົດເຈົ້າ

[໑໙໐] ພິກຂຸທັງຫຼາຍ ພຣະສຸຄົດເຈົ້າ[໑]ຫຼືວິໄນຂອງພຣະສຸຄົດເຈົ້າ ເມື່ອດຳລົງຢູ່ໃນໂລກ ເພິ່ງເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ[໒] ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ພຣະສຸຄົດເຈົ້າ ຄືຜູ້ໃດ?

ຄື ຕະຖາຄົດເກີດຂຶ້ນໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າເປັນພຣະ

ຜູ້ມີພຣະພາກເຈົ້າ[໑] ພິກຂຸທັງຫຼາຍ ນີ້ຄືພຣະສຸຄົດເຈົ້າ

ວິໄນຂອງພຣະສຸຄົດເຈົ້າ ເປັນແນວໃດ?

ຄື ພຣະສຸຄົດເຈົ້ານັ້ນຍ່ອມຊົງສະແດງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ພິກຂຸທັງຫຼາຍ ນີ້ຄືວິໄນຂອງພຣະສຸຄົດເຈົ້າ

ພິກຂຸທັງຫຼາຍ ພຣະສຸຄົດເຈົ້າຫຼືວິໄນຂອງພຣະສຸຄົດເຈົ້າ ເມື່ອດຳລົງຢູ່ໃນໂລກແນວນີ້ ເພິ່ງເປັນໄປເພື່ອເກື້ອກູນຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ທຳ ໔ ປະການນີ້ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸທັງຫຼາຍໃນທຳວິໄນນີ້

໑. ຮ່ຳຮຽນສູດທີ່ຮ່ຳຮຽນກັນມາຜິດລຳດັບໂດຍບົດພະຍັນຊະນະທີ່ ສືບທອດກັນມາບໍ່ດີ[໒] ແມ່ນ ອັດຖະແຫ່ງບົດພະຍັນຊະນະທີ່ສືບທອດກັນມາບໍ່ດີ ກໍເປັນ

ການສືບທອດຂະຫຍາຍຄວາມບໍ່ດີ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໔. ເປັນຜູ້ວ່າຍາກ ປະກອບດ້ວຍທຳເຄື່ອງທຳຄວາມເປັນຜູ້ວ່າຍາກ ບໍ່ອົດທົນ ບໍ່ຮັບຄຳພ່ຳສອນໂດຍເຄົາລົບ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໓. ເປັນພະຫູສູດ ຮຽນຈົບຄຳພີ[໓] ຊົງທຳ ຊົງວິໄນ ຊົງມາຕິກາ ບໍ່ຖ່າຍທອດສູດແກ່ຜູ້ອື່ນໂດຍເຄົາລົບ ເມື່ອພິກຂຸເຫຼົ່ານັ້ນລ່ວງລັບໄປ ສູດ ກໍຂາດຮາກຖານບໍ່ມີບ່ອນເພິ່ງອາໄສ ນີ້ເປັນທຳປະການທີ ໓ ຍ່ອມເປັນ ໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໔. ເປັນເຖຣະ ເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ[໑] ຖືເບົາ[໒]ໃນປະວິເວກ[໓] ບໍ່ຜາຣົບຄວາມພຽນ[໔] ເພື່ອເຖິງທຳ ທີ່ຍັງບໍ່ເຖິງເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນກໍເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ

ເປັນຜູ້ນຳໃນໂອກກະມະນະທຳ ຖືເບົາໃນປະວິເວກ ບໍ່ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸທັງຫຼາຍໃນທຳວິໄນນີ້

໑. ຮ່ຳຮຽນສູດທີ່ຮ່ຳຮຽນກັນມາດີໂດຍບົດພະຍັນຊະນະທີ່ສືບທອດກັນມາດີ ແມ່ນອັດຖະແຫ່ງບົດພະຍັນຊະນະທີ່ສືບທອດກັນມາດີກໍເປັນການສືບທອດຂະຫຍາຍຄວາມດີ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໔. ເປັນຄົນວ່າງ່າຍ ປະກອບດ້ວຍທຳເຄື່ອງທຳຄວາມເປັນຜູ້ວ່າງ່າຍ ອົດທົນ ຮັບຄຳພ່ຳສອນໂດຍເຄົາລົບ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໓. ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຖ່າຍທອດສູດແກ່ຜູ້ອື່ນໂດຍເຄົາລົບ ເມື່ອພິກຂຸເຫຼົ່ານັ້ນລ່ວງລັບໄປ ສູດກໍບໍ່ຂາດຮາກຖານ ມີບ່ອນເພິ່ງອາໄສ ນີ້ເປັນທຳປະການທີ ໓ ຍ່ອມ ເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໔. ເປັນເຖຣະ ເປັນຜູ້ບໍ່ມັກຫຼາຍ ເປັນຜູ້ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນເພື່ອເຖິງທຳ ທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນກໍເປັນຜູ້ບໍ່ມັກຫຼາຍ ເປັນຜູ້ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

**ສຸຄະຕະວິນຍະສູດທີ ໑໐ ຈົບ**

**ອິນທະຣິຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອິນທະຣິຍະສູດ | ໒. ສັທທາພະລະສູດ |
| ໓. ປັນຍາພະລະສູດ | ໔. ສະຕິພະລະສູດ |
| ໕. ປະຕິສັງຂານະພະລະສູດ | ໖. ກັບປະສູດ |
| ໗. ໂຣຄະສູດ | ໘. ປະຣິຫານີສູດ |
| ໙. ພິກຂຸນີສູດ | ໑໐. ສຸຄະຕະວິນຍະສູດ |

# ໒. ປະຕິປະທາວັກ

## ໝວດວ່າດ້ວຍປະຕິປະທາ

## ໑. ສັງຂິດຕະສູດ

### ວ່າດ້ວຍປະຕິປະທາໂດຍຫຍໍ້

[໑໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປະຕິປະທາ ໔[๑] ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ (ປະຕິບັດລຳບາກແລະຮູ້ໄດ້ຊ້າ)
໒. ທຸກຂາປະຕິປະທາ ຂິບປາພິນຍາ (ປະຕິບັດລຳບາກ ແຕ່ຮູ້ໄດ້ໄວ)
໓. ສຸຂາປະຕິປະທາ ທັນທາພິນຍາ (ປະຕິບັດສະດວກ ແຕ່ຮູ້ໄດ້ຊ້າ)
໔. ສຸຂາປະຕິປະທາ ຂິບປາພິນຍາ (ປະຕິບັດສະດວກແລະຮູ້ໄດ້ໄວ)

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ສັງຂິດຕະສູດທີ ໑ ຈົບ**

## ໒. ວິດຖາຣະສູດ

### ວ່າດ້ວຍປະຕິປະທາໂດຍພິດສະດານ

[໑໖໒] ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ
໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ທຸກຂາປະຕິປະທາ ທັນທາພິນຍາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂດຍປົກກະຕິເປັນຄົນມີຣາຄະກ້າ ຍ່ອມສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກຣາຄະເປັນປະຈຳແດ່ ໂດຍປົກກະຕິເປັນຄົນມີໂທສະກ້າ ຍ່ອມສະເຫວີຍທຸກຂະໂທມະນັດທີ່ເກີດຈາກໂທສະເປັນປະຈຳແດ່ ໂດຍປົກກະຕິເປັນຄົນມີໂມຫະກ້າ ຍ່ອມສະເຫວີຍທຸກຂະໂທມະນັດທີ່ເກີດຈາກໂມຫະເປັນປະຈຳແດ່ ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດອ່ອນ ຍ້ອນອິນຊີ

໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະຊ້າ ນີ້ຮຽກວ່າ ທຸກຂາປະຕິປະທາ ທັນທາພິນຍາ

ທຸກຂາປະຕິປະທາ ຂິບປາພິນຍາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂດຍປົກກະຕິເປັນຄົນມີຣາຄະກ້າ ຍ່ອມສະເຫວີຍທຸກຂະໂທມະນັດທີ່ເກີດຈາກຣາຄະເປັນປະຈຳແດ່ ໂດຍປົກກະຕິເປັນຄົນມີໂທສະກ້າ ຍ່ອມສະເຫວີຍທຸກຂະໂທມະນັດທີ່ເກີດຈາກໂທສະເປັນປະຈຳແດ່ ໂດຍປົກກະຕິເປັນຄົນມີໂມຫະກ້າ ຍ່ອມສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກໂມຫະເປັນປະຈຳແດ່ ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດແກ່ກ້າ ຍ້ອນອິນຊີ ໕ ປະການນີ້ຜາກົດແກ່ກ້າ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະໄວ ນີ້ຮຽກວ່າ ທຸກຂາປະຕິປະທາ ຂິບປາພິນຍາ

ສຸຂາປະຕິປະທາ ທັນທາພິນຍາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂດຍປົກກະຕິເປັນຄົນບໍ່ມີຣາຄະກ້າ ຈຶ່ງບໍ່ສະເຫວີຍທຸກຂະໂທມະ ນັດ ທີ່ເກີດຈາກຣາຄະເປັນປະຈຳແດ່ ໂດຍປົກກະຕິເປັນຄົນບໍ່ມີໂທສະກ້າ ຈຶ່ງບໍ່ສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກໂທສະເປັນປະຈຳແດ່ ໂດຍປົກກະຕິເປັນຄົນບໍ່ມີໂມຫະກ້າ ຈຶ່ງບໍ່ສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກໂມຫະເປັນປະຈຳແດ່ ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດອ່ອນ ຍ້ອນອິນຊີ ໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະຊ້າ ນີ້ຮຽກວ່າ ສຸຂາປະຕິປະທາ ທັນທາພິນຍາ

ສຸຂາປະຕິປະທາ ຂິບປາພິນຍາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂດຍປົກກະຕິເປັນຄົນບໍ່ມີຣາຄະກ້າ ຈຶ່ງບໍ່ສະເຫວີຍທຸກຂະໂທມະ ນັດ ທີ່ເກີດຈາກຣາຄະເປັນປະຈຳແດ່ ໂດຍປົກກະຕິເປັນຄົນບໍ່ມີໂທສະກ້າ ຈຶ່ງບໍ່ສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກໂທສະເປັນປະຈຳແດ່ ໂດຍປົກກະຕິເປັນຄົນບໍ່ມີໂມຫະກ້າ

ຈຶ່ງບໍ່ສະເຫວີຍທຸກຂະໂທມະນັດ ທີ່ເກີດຈາກໂມຫະເປັນປະຈຳແດ່ ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດແກ່ກ້າຍ້ອນອິນຊີ

໕ ປະການນີ້ຜາກົດແກ່ກ້າ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະໄວ ນີ້ຮຽກວ່າ ສຸຂາປະຕິປະທາ ຂິບປາພິນຍາ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ວິຕະຖາຣະສູດທີ ໒ ຈົບ**

## ໓. ອະສຸພະສູດ

## ວ່າດ້ວຍການພິຈາລະນາເຫັນຄວາມບໍ່ງາມໃນກາຍ

[໑໖໓] ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ
໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ທຸກຂາປະຕິປະທາ ທັນທາພິນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນຄວາມບໍ່ງາມໃນກາຍ ມີສັນຍາ (ຄວາມຈື່ໄດ້ໝາຍຮູ້)ວ່າປະຕິກູນໃນອາຫານ ມີສັນຍາວ່າບໍ່ໜ້າເພີດເພີນໃນໂລກທັງປວງ ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງຢູ່ ທ່ານມີມໍຣະນະສັນຍາທີ່ຕັ້ງໝັ້ນດີພາຍໃນ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ (ກຳລັງຄືສັດທາ) ຫິຣິພະລະ (ກຳລັງຄືຫິຣິ) ໂອດຕັບປະພະລະ (ກຳລັງຄືໂອດຕັບປະ) ວິຣິຍະພະລະ (ກຳລັງຄືວິຣິຍະ) ປັນຍາພະລະ (ກຳລັງຄືປັນຍາ) ແລະອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ (ອິນຊີຄືສັດທາ) ວິຣິຍິນຊີ (ອິນຊີຄືວິຣິຍະ) ສະຕິນຊີ (ອິນຊີຄືສະຕິ) ສະມາທິນຊີ (ອິນຊີຄືສະມາທິ) ປັນຍິນຊີ (ອິນຊີຄືປັນຍາ) ຍ່ອມຜາກົດອ່ອນ ຍ້ອນອິນຊີ ໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະຊ້າ ນີ້ຮຽກວ່າ

ທຸກຂາປະຕິປະທາ ທັນທາພິນຍາ

ທຸກຂາປະຕິປະທາ ຂິບປາພິນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນຄວາມບໍ່ງາມໃນກາຍ ມີສັນຍາວ່າປະຕິກູນໃນອາຫານ ມີສັນຍາວ່າບໍ່ໜ້າເພີດເພີນໃນໂລກທັງປວງ ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງຢູ່ ທ່ານມີມໍຣະນະສັນຍາທີ່ຕັ້ງໝັ້ນດີພາຍໃນ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແຕ່ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດແກ່ກ້າ ຍ້ອນອິນຊີ ໕ ປະການນີ້ຜາກົດແກ່ກ້າ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະໄວ ນີ້ຮຽກວ່າ ທຸກຂາປະຕິປະທາ ຂິບປາພິນຍາ

ສຸຂາປະຕິປະທາ ທັນທາພິນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກວິຈານມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິ ສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດ ດັບໄປກ່ອນແລ້ວ ພິກຂຸບັນລຸຈະ ຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ພິກຂຸເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແຕ່ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດອ່ອນ ຍ້ອນອິນຊີ ໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະຊ້າ ນີ້ຮຽກວ່າ ສຸຂາປະຕິປະທາ ທັນທາພິນຍາ

ສຸຂາປະຕິປະທາ ຂິບປາພິນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ฯລฯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ฯລฯ ຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ฯລฯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານ ฯລฯ ຢູ່ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແລະອິນຊີ ໕ ປະການ

ນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດແກ່ກ້າ ຍ້ອນອິນຊີ ໕ ປະການນີ້ຜາກົດແກ່ກ້າ ທ່ານຈຶ່ງບັນລຸຄຸນວິເສດເພື່ອຄວາມໝົດສິ້ນອາສະວະໄວ ນີ້ຮຽກວ່າ ສຸຂາປະຕິປະທາ ຂິບປາພິນຍາ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ອະສຸພະສູດທີ ໓ ຈົບ**

## ໔. ປະຖົມຂະມະສູດ

### ວ່າດ້ວຍປະຕິປະທາທີ່ອົດທົນ ສູດທີ ໑

[໑໖໔] ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ອັກຂະມາ ປະຕິປະທາ (ຂໍ້ປະຕິບັດທີ່ບໍ່ອົດທົນ)
໒. ຂະມາ ປະຕິປະທາ໑ (ຂໍ້ປະຕິບັດທີ່ອົດທົນ)
໓. ທະມາ ປະຕິປະທາ໔ (ຂໍ້ປະຕິບັດທີ່ຂົ່ມໃຈ)
໔. ສະມາ ປະຕິປະທາ໓ (ຂໍ້ປະຕິບັດທີ່ລະງັບ)

ອັກຂະມາ ປະຕິປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ດ່າໂຕ້ຕອບຄົນທີ່ດ່າ ໂກດຕອບຄົນທີ່ໂກດ ຖຽງໂຕ້ຕອບຄົນທີ່ຖຽງ ນີ້ຮຽກວ່າ ອັກຂະມາ ປະຕິປະທາ

ຂະມາ ປະຕິປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ດ່າໂຕ້ຕອບຄົນທີ່ດ່າ ບໍ່ໂກດຕອບຄົນທີ່ໂກດ ບໍ່ຖຽງໂຕ້ຕອບຄົນທີ່ຖຽງ ນີ້ຮຽກວ່າ ຂະມາ ປະຕິປະທາ

ທະມາ ປະຕິປະທາ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ ເຫັນຮູບທາງຕາແລ້ວບໍ່ໂຮມຖື[໑] ບໍ່ແຍກຖື[໒] ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມຈັກຂຸນຊີ ຟັງ

ສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະ ທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມໃນມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ນີ້ຮຽກວ່າ ທະມາ ປະຕິປະທາ

ສະມາ ປະຕິປະທາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຍິນດີກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສະງົບ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີພະຍາບາດວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຍິນດີ ວິຫິງສາວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຍິນດີບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສະງົບ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ນີ້ຮຽກວ່າ ສະມາ ປະຕິປະທາ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ປະຖົມຂະມະສູດທີ ໔ ຈົບ**

## ໕. ທຸຕິຍະຂະມະສູດ

### ວ່າດ້ວຍປະຕິປະທາທີ່ອົດທົນ ສູດທີ ໕

[໑໖໕] ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ອັກຂະມາ ປະຕິປະທາ
໒. ຂະມາ ປະຕິປະທາ
໓. ທະມາ ປະຕິປະທາ
໔. ສະມາ ປະຕິປະທາ

ອັກຂະມາ ປະຕິປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ຕໍ່ການຖືກເຮືອດ ຍຸງ ລົມ ແດດ ແລະສັດເລືອຄານທັງຫຼາຍລົບກວນ ຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ເປັນຜູ້ບໍ່ອົດກັ້ນເວທະນາທັງຫຼາຍ ອັນມີໃນຮ່າງກາຍ ທີ່ເກີດຂຶ້ນແລ້ວ ເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ນີ້ຮຽກວ່າ ອັກຂະມາ ປະຕິປະທາ

ຂະມາ ປະຕິປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ຕໍ່ການຖືກເຮືອດ ຍຸງ ລົມ ແດດ ແລະສັດເລືອຄານທັງຫຼາຍລົບກວນ ຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ເປັນຜູ້ອົດກັ້ນເວທະນາທັງຫຼາຍອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວ ເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ນີ້ຮຽກວ່າ ຂະມາ ປະຕິປະທາ

ທະມາ ປະຕິປະທາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ນີ້ຮຽກວ່າ ທະມາ ປະຕິປະທາ

ສະມາ ປະຕິປະທາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຍິນດີການວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສະງົບ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີພະຍາບາດວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີ ວິຫິງສາວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສະງົບ ເຮັດໃຫ້ໝົດສິ້ນໄປ ເຮັດໃຫ້ເຖິງຄວາມບໍ່ມີ ນີ້ຮຽກວ່າ ສະມາ ປະຕິປະທາ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ທຸຕິຍະຂະມະສູດທີ ໕ ຈົບ**

## ໖. ອຸພະຍະສູດ

## ວ່າດ້ວຍປະຕິປະທາທີ່ມີລັກສະນະຄືກັນທັງ ໔ ສ່ວນ

[໑໖໖] ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ (ປະຕິບັດລຳບາກແລະຮູ້ໄດ້ຊ້າ)
໒. ທຸກຂາປະຕິປະທາ ຂິບປາພິນຍາ (ປະຕິບັດລຳບາກ ແຕ່ຮູ້ໄດ້ໄວ)
໓. ສຸຂາປະຕິປະທາ ທັນທາພິນຍາ (ປະຕິບັດສະດວກ ແຕ່ຮູ້ໄດ້ຊ້າ)
໔. ສຸຂາປະຕິປະທາ ຂິບປາພິນຍາ (ປະຕິບັດສະດວກແລະຮູ້ໄດ້ໄວ)

ບັນດາປະຕິປະທາ ໔ ປະການນັ້ນ ທຸກຂາປະຕິປະທາ ທັນທາພິນຍາ ປະຕິປະທານີ້ບັນດິດ ກ່າວວ່າເປັນຂໍ້ປະຕິບັດຕ່ຳທັງ ໒ ສ່ວນ ຄື ຕ່ຳຍ້ອນການປະຕິບັດລຳບາກ ແລະຕ່ຳຍ້ອນຮູ້ໄດ້ຊ້າ ປະຕິປະທານີ້ບັນດິດກ່າວວ່າເປັນຂໍ້ປະຕິບັດຕ່ຳທັງ ໒ ສ່ວນ

ບັນດາປະຕິປະທາ ໔ ປະການນັ້ນ ທຸກຂາປະຕິປະທາ ຂິບປາພິນຍາ ປະຕິປະທານີ້ບັນດິດ ກ່າວວ່າເປັນຂໍ້ປະຕິບັດຕ່ຳຍ້ອນປະຕິບັດລຳບາກ

ບັນດາປະຕິປະທາ ໔ ປະການນັ້ນ ສຸຂາປະຕິປະທາ ທັນທາພິນຍາ ປະຕິປະທານີ້ບັນດິດກ່າວວ່າເປັນຂໍ້ປະຕິບັດຕ່ຳຍ້ອນຮູ້ໄດ້ຊ້າ

ບັນດາປະຕິປະທາ ໔ ປະການນັ້ນ ສຸຂາປະຕິປະທາ ຂິບປາພິນຍາ ປະຕິປະທານີ້ບັນດິດ ກ່າວວ່າເປັນຂໍ້ປະຕິບັດປະນີດທັງ ໒ ສ່ວນ ຄື ປະນີດຍ້ອນປະຕິບັດສະດວກ ແລະປະນີດຍ້ອນຮູ້ໄດ້ໄວ ປະຕິປະທານີ້ບັນດິດກ່າວວ່າເປັນຂໍ້ປະຕິບັດປະນີດທັງ ໒ ສ່ວນ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

**ອຸພະຍະສູດທີ ໖ ຈົບ**

## ໗. ມະຫາໂມກຄັນລານະສູດ

## ວ່າດ້ວຍປະຕິປະທາທີ່ເປັນເຫດໃຫ້ຈິດຂອງພຣະມະຫາໂມກຄັນລານະລຸດພົ້ນ

[໑໖໗] ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂມກຄັນລານະ ວ່າ

ທ່ານໂມກຄັນລານະ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ

໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ຜູ້ມີອາຍຸ ປະຕິປະທາ ໔ ປະການນີ້ແລ

ບັນດາປະຕິປະທາ ໔ ປະການນີ້ ຍ້ອນອາໄສປະຕິປະທາຂໍ້ໃດ ຈິດຂອງທ່ານຈຶ່ງລຸດພົ້ນຈາກອາສະວະ ບໍ່ຖືໝັ້ນດ້ວຍອຸປາທານ

ທ່ານພຣະມະຫາໂມກຄັນລານະຕອບວ່າ ທ່ານສາຣີບຸດ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ
໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ຜູ້ມີອາຍຸ ປະຕິປະທາ ໔ ປະການນີ້ແລ

ບັນດາປະຕິປະທາ ໔ ປະການນີ້ ຍ້ອນອາໄສທຸກຂາປະຕິປະທາ ຂິບປາພິນຍາ[1] ຈິດຂອງຂ້ານ້ອຍຈຶ່ງລຸດພົ້ນຈາກອາສະວະ ບໍ່ຖືໝັ້ນດ້ວຍອຸປາທານ

**ມະຫາໂມກຄັນລານະສູດທີ ໗ ຈົບ**

## ໘. ສາຣີປຸດຕະສູດ

## ວ່າດ້ວຍປະຕິປະທາທີ່ເປັນເຫດໃຫ້ຈິດຂອງພຣະສາຣີບຸດລຸດພົ້ນ

[໑໖໘] ຄັ້ງນັ້ນແລ ທ່ານພຣະມະຫາໂມກຄັນລານະເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດ ວ່າ

ທ່ານສາຣີບຸດ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ
໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ຜູ້ມີອາຍຸ ປະຕິປະທາ ໔ ປະການນີ້ແລ

ບັນດາປະຕິປະທາ ໔ ປະການນີ້ ຍ້ອນອາໄສປະຕິປະທາຂໍ້ໃດ ຈິດຂອງທ່ານຈຶ່ງລຸດພົ້ນຈາກອາສະວະ ບໍ່ຖືໝັ້ນດ້ວຍອຸປາທານ

ທ່ານພຣະສາຣີບຸດຕອບວ່າ ທ່ານໂມກຄັນລານະ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາປະຕິປະທາ ທັນທາພິນຍາ
໒. ທຸກຂາປະຕິປະທາ ຂິບປາພິນຍາ
໓. ສຸຂາປະຕິປະທາ ທັນທາພິນຍາ
໔. ສຸຂາປະຕິປະທາ ຂິບປາພິນຍາ

ຜູ້ມີອາຍຸ ປະຕິປະທາ ໔ ປະການນີ້ແລ

ບັນດາປະຕິປະທາ ໔ ປະການນີ້ ຍ້ອນອາໄສສຸຂາປະຕິປະທາ ຂິບປາພິນຍາ[១] ຈິດຂອງຂ້ານ້ອຍຈຶ່ງລຸດພົ້ນຈາກອາສະວະ ບໍ່ຖືໝັ້ນດ້ວຍອຸປາທານ

**ສາຣີປຸດຕະສູດທີ ๗ ຈົບ**

## ໗. ສະສັງຂາຣະສູດ

## ວ່າດ້ວຍຜູ້ເປັນສະສັງຂາຣະປະຣິນິບພາຍີໃນປັດຈຸບັນ

[໑໖໙] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ເປັນສະສັງຂາຣະປະຣິນິບພາຍີ[១]ໃນປັດຈຸບັນ
໒. ບຸກຄົນລາງຄົນໃນໂລກນີ້ ເປັນສະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ
໓. ບຸກຄົນລາງຄົນໃນໂລກນີ້ ເປັນອະສັງຂາຣະປະຣິນິບພາຍີ[២]ໃນປັດຈຸບັນ

໔. ບຸກຄົນລາງຄົນໃນໂລກນີ້ ເປັນອະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ

ບຸກຄົນເປັນສະສັງຂາຣະປະຣິນິບພາຍີໃນປັດຈຸບັນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຄວາມບໍ່ງາມໃນກາຍ ມີສັນຍາ (ຄວາມຈື່ໄດ້ໝາຍຮູ້)ວ່າປະຕິກູນໃນອາຫານ ມີສັນຍາວ່າບໍ່ໜ້າເພີດເພີນໃນໂລກທັງປວງ ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງສານທັງປວງຢູ່ ທ່ານມີມໍຣະນະສັນຍາທີ່ຕັ້ງໝັ້ນດີຢູ່ພາຍໃນ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແລະອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດແກ່ກ້າ ຍ້ອນອິນຊີ ໕ ປະການນີ້ຜາກົດ ແກ່ກ້າ ທ່ານຈຶ່ງເປັນສະສັງຂາຣະປະຣິນິບພາຍີໃນປັດຈຸບັນ ບຸກຄົນເປັນສະສັງຂາຣະປະຣິນິບພາຍີໃນປັດຈຸບັນ ເປັນແນວນີ້ແລ

ບຸກຄົນເປັນສະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຄວາມບໍ່ງາມໃນກາຍ ມີສັນຍາວ່າປະຕິກູນໃນອາຫານ ມີສັນຍາວ່າບໍ່ໜ້າເພີດເພີນໃນໂລກທັງປວງ ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງສານທັງປວງຢູ່ ແລະທ່ານມີມໍຣະນະສັນຍາທີ່ຕັ້ງໝັ້ນດີພາຍໃນ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແຕ່ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດອ່ອນ ຍ້ອນອິນຊີ ໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງເປັນສະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ ບຸກຄົນເປັນສະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ ເປັນແນວນີ້ແລ

ບຸກຄົນເປັນອະສັງຂາຣະປະຣິນິບພາຍີໃນປັດຈຸບັນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່[๑] ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະຍ່ອມຜາກົດແກ່ກ້າ ຍ້ອນອິນຊີ ໕ ປະການນີ້ຜາກົດແກ່ກ້າ ທ່ານຈຶ່ງເປັນອະສັງຂາຣະປະຣິນິບພາຍີໃນປັດຈຸບັນ ບຸກຄົນເປັນອະສັງຂາຣະປະຣິນິບພາຍີໃນປັດຈຸບັນ ເປັນແນວນີ້ແລ

ບຸກຄົນເປັນອະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່໑ ທ່ານເຂົ້າໄປອາໄສເສກຂະພະລະ ໕ ປະການ ນີ້ຢູ່ ຄື ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ປັນຍາພະລະ ແຕ່ອິນຊີ ໕ ປະການນີ້ຂອງທ່ານ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມຜາກົດອ່ອນ ຍ້ອນອິນຊີ ໕ ປະການນີ້ຜາກົດອ່ອນ ທ່ານຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຫຼັງຈາກຕາຍແລ້ວ ບຸກຄົນເປັນອະສັງຂາຣະປະຣິນິບພາຍີຫຼັງຈາກຕາຍແລ້ວ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ສະສັງຂາຣະສູດທີ ໙ ຈົບ**

## ໑໐. ຍຸຄະນັດທະສູດ

## ວ່າດ້ວຍການຈະເລີນສະມະຖະແລະວິປັດສະນາຄວບຄູ່ກັນໄປ

[໑໗໐] ສະໄໝໜຶ່ງ ທ່ານພຣະອານົນຢູ່ທີ່ໂຄສິຕາຣາມ ເຂດນະຄອນໂກສຳພີ ໃນບ່ອນນັ້ນແລ ທ່ານພຣະອານົນຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ຜູ້ໃດກໍຕາມ ບໍ່ວ່າຈະເປັນພິກຂຸຫຼືພິກຂຸນີເປີດເຜີຍການບັນລຸອະຣະຫັດຕະຜົນ ໃນສຳນັກຂອງເຮົາດ້ວຍມັກ ໔ ປະການໂດຍປະການທັງປວງ ຫຼື ມັກໃດ ມັກໜຶ່ງບັນດາມັກ ໔ ປະການນີ້

ຜູ້ໃດກໍຕາມ ຈະເປັນພິກຂຸຫຼືພິກຂຸນີເປີດເຜີຍການບັນລຸອະຣະຫັດຕະຜົນໃນສຳນັກຂອງເຮົາດ້ວຍມັກ ໔ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ຈະເລີນວິປັດສະນາອັນມີສະມະຖະນຳໜ້າ ເມື່ອທ່ານຈະເລີນວິປັດສະນາ ອັນມີສະມະຖະນຳໜ້າ ມັກຍ່ອມເກີດ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກ ເມື່ອທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນຢູ່ ຍ່ອມລະສັງໂຍດໄດ້ ອະນຸໄສທັງຫຼາຍຍ່ອມສິ້ນສຸດໄປ

໔. ພິກຂຸຈະເລີນສະມະຖະອັນມີວິປັດສະນານຳໜ້າ ເມື່ອທ່ານຈະເລີນສະມະຖະອັນມີວິປັດສະນານຳໜ້າ ມັກຍ່ອມເກີດ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສທັງຫຼາຍຍ່ອມສິ້ນສຸດໄປ

໓. ພິກຂຸຈະເລີນສະມະຖະແລະວິປັດສະນາຄວບຄູ່ກັນໄປ ເມື່ອທ່ານຈະເລີນສະມະຖະແລະ ວິປັດສະນາຄວບຄູ່ກັນໄປ ມັກຍ່ອມເກີດ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍ ເຊິ່ງມັກນັ້ນ ເມື່ອທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສທັງຫຼາຍຍ່ອມສິ້ນສຸດໄປ

໔. ພິກຂຸມີໃຈຖືກອຸດທັດຈະໃນທຳກັ້ນໄວ້ໃນເວລາທີ່ຈິດຕັ້ງໝັ້ນ ສະງົບພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຕັ້ງໝັ້ນຢູ່ ມັກກໍເກີດຂຶ້ນແກ່ທ່ານ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານເສບ ຈະເລີນ ເຮັດໃຫ້ຫຼາຍ ເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສທັງຫຼາຍຍ່ອມສິ້ນສຸດໄປ

ຜູ້ມີອາຍຸທັງຫຼາຍ ຜູ້ໃດກໍຕາມບໍ່ວ່າຈະເປັນພິກຂຸ ຫຼື ພິກຂຸນີເປີດເຜີຍການບັນລຸອະຣະຫັດຕະຜົນໃນສຳນັກຂອງເຮົາດ້ວຍມັກ ໔ ປະການໂດຍປະການທັງປວງ ຫຼືມັກໃດມັກໜຶ່ງບັນດາມັກ ໔ ປະການນີ້

**ຍຸຄະນັດທະສູດທີ ໑໐ ຈົບ**

**ປະຕິປະທາວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື


໑. ສັງຂິດຕະສູດ
໒. ອະສຸພະສູດ
໓. ທຸຕິຍະຂະມະສູດ
໔. ມະຫາໂມກຄັນລານະສູດ
໕. ສະສັງຂາຣະສູດ
໖. ວິດຖາຣະສູດ
໗. ປະຖົມຂະມະສູດ
໘. ອຸພະຍະສູດ
໙. ສາຣີປຸດຕະສູດ
໑໐. ຍຸຄະນັດທະສູດ

# ៦. ສັນເຈຕະນິຍະວັກ

## ໝວດວ່າດ້ວຍຄວາມຈິງໃຈ

## ໑. ເຈຕະນາສູດ

### ວ່າດ້ວຍເຈຕະນາ

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ເມື່ອກາຍ[໑]ມີຢູ່ ສຸກທຸກພາຍໃນຍ່ອມເກີດຂຶ້ນ ຍ້ອນກາຍສັນເຈຕະນາ[໒]ເປັນເຫດ ເມື່ອວາຈາມີຢູ່ ສຸກທຸກພາຍໃນຍ່ອມເກີດຂຶ້ນ ຍ້ອນວະຈີສັນເຈຕະນາເປັນເຫດ ຫຼືເມື່ອໃຈມີຢູ່ ສຸກທຸກພາຍໃນຍ່ອມເກີດຂຶ້ນ ຍ້ອນມະໂນສັນເຈຕະນາເປັນເຫດ ຄື ຍ້ອນອະວິດຊາເປັນປັດໄຈ

ບຸກຄົນປຸງແຕ່ງກາຍສັງຂານ[໓]ອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນດ້ວຍຕົນເອງແດ່ ບຸກຄົນອື່ນປຸງແຕ່ງກາຍສັງຂານຂອງບຸກຄົນນັ້ນອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນ ນັ້ນແດ່ ບຸກຄົນຮູ້ສຶກໂຕ ປຸງແຕ່ງກາຍສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່ ບຸກຄົນບໍ່ຮູ້ສຶກໂຕ ປຸງແຕ່ງກາຍສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່

ບຸກຄົນປຸງແຕ່ງວະຈີສັງຂານ[໔]ອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນດ້ວຍຕົນເອງແດ່ ບຸກຄົນອື່ນປຸງແຕ່ງວະຈີສັງຂານຂອງບຸກຄົນນັ້ນອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນ ນັ້ນແດ່ ບຸກຄົນຮູ້ສຶກໂຕ ປຸງແຕ່ງວະຈີສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່ ບຸກຄົນບໍ່ຮູ້ສຶກໂຕ ປຸງແຕ່ງວະຈີສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່

ບຸກຄົນປຸງແຕ່ງມະໂນສັງຂານ[໕]ອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນດ້ວຍຕົນເອງແດ່ ບຸກຄົນອື່ນປຸງແຕ່ງມະໂນສັງຂານຂອງບຸກຄົນນັ້ນອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນ ນັ້ນແດ່ ບຸກຄົນຮູ້ສຶກໂຕ ປຸງແຕ່ງມະໂນສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່ ບຸກຄົນບໍ່ຮູ້ສຶກໂຕ ປຸງແຕ່ງມະໂນສັງຂານອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແດ່

ອະວິດຊາຍ່ອມຕົກໄປຕາມທຳເຫຼົ່ານີ້ ແຕ່ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ກາຍອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນນັ້ນຈຶ່ງບໍ່ມີ ວາຈາອັນເປັນປັດໄຈໃຫ້ ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນນັ້ນຈຶ່ງບໍ່ມີ ໃຈອັນເປັນປັດໄຈໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນນັ້ນຈຶ່ງບໍ່ມີ ເຂດ ໆລໆ ວັດຖຸ ໆລໆ ອາຍະຕະນະ ໆລໆ ອະທິກະຣະນະ[໖]ອັນເປັນປັດໄຈ ໃຫ້ສຸກທຸກພາຍໃນເກີດຂຶ້ນແກ່ບຸກຄົນນັ້ນ ຈຶ່ງບໍ່ມີ

ພິກຂຸທັງຫຼາຍ ຄວາມໄດ້ອັດຕະພາບ ໔ ປະການ[๑]ນີ້

ຄວາມໄດ້ອັດຕະພາບ ໔ ປະການ ອັນໃດແດ່ ຄື

໑. ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປ
໒. ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຜູ້ອື່ນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຕົນດຳເນີນໄປ
໓. ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນ ແລະສັນເຈຕະນາຂອງຜູ້ອື່ນດຳເນີນໄປ
໔. ຄວາມໄດ້ອັດຕະພາບທີ່ບໍ່ແມ່ນສັນເຈຕະນາຂອງຕົນ ແລະບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປ

ພິກຂຸທັງຫຼາຍ ຄວາມໄດ້ອັດຕະພາບ ໔ ປະການນີ້ແລ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ແຈ້ງເນື້ອຄວາມແຫ່ງທຳທີ່ພຣະອົງຕັດໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້ວ່າ ບັນດາຄວາມໄດ້ອັດຕະພາບ ໔ ປະການນັ້ນ ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປ ນີ້ຄືການຈຸຕິ ຈາກກາຍນັ້ນຂອງສັດເຫຼົ່ານັ້ນ ມີໄດ້ຍ້ອນສັນເຈຕະນາຂອງຕົນເປັນເຫດ ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຜູ້ອື່ນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຕົນດຳເນີນໄປ ນີ້ຄືການຈຸຕິຈາກກາຍນັ້ນຂອງສັດເຫຼົ່ານັ້ນ ມີໄດ້ຍ້ອນສັນເຈຕະນາຂອງຜູ້ອື່ນເປັນເຫດ ຄວາມໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນແລະສັນເຈຕະນາຂອງຜູ້ອື່ນດຳເນີນໄປ ນີ້ຄືການຈຸຕິຈາກກາຍນັ້ນຂອງສັດເຫຼົ່ານັ້ນ ມີໄດ້ຍ້ອນສັນເຈຕະນາຂອງຕົນແລະສັນເຈຕະນາຂອງຜູ້ອື່ນເປັນເຫດ ຄວາມໄດ້ອັດຕະພາບທີ່ບໍ່ແມ່ນສັນເຈຕະນາຂອງຕົນແລະບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປນີ້ເພິ່ງເຫັນເທວະດາພວກໃດ ທີ່ດຳເນີນໄປນຳອັດຕະພາບນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາຣີບຸດ ເພິ່ງເຫັນເທວະດາທັງຫຼາຍຜູ້ເຂົ້າເຖິງຊັ້ນເນວະສັນຍານາສັນຍາຍະຕະນະ ດ້ວຍອັດຕະພາບນັ້ນ"

ທ່ານພຣະສາຣີບຸດທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ຈຸຕິຈາກກາຍນັ້ນແລ້ວເປັນອາຄາມີກັບມາສູ່ຄວາມເປັນແນວນີ້ ແລະ

ອັນໃດເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຈຸຕິຈາກກາຍນັ້ນແລ້ວເປັນອະນາຄາມີຜູ້ບໍ່ກັບມາສູ່ຄວາມເປັນແນວນີ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາຣີບຸດ ບຸກຄົນລາງຄົນໃນໂລກນີ້ຍັງລະໂອຣຳພາຄິຍະ-ສັງໂຍດ (ສັງໂຍດເບື້ອງຕ່ຳ)ບໍ່ໄດ້ ແຕ່ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ໃນປັດຈຸບັນ ເຂົາພໍໃຈເນວະສັນຍານາສັນຍາຍະຕະນະຊານນັ້ນ ຕິດໃຈເນວະສັນຍານາສັນຍາຍະຕະນະຊານນັ້ນ ແລະເຖິງຄວາມດີໃຈກັບເນວະສັນຍານາສັນຍາຍະຕະນະຊານນັ້ນ ເຂົາດຳລົງຢູ່ໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ມັກຢູ່ກັບເນວະສັນຍານາສັນຍາຍະຕະນະຊານນັ້ນສ່ວນຫຼາຍບໍ່ເສື່ອມ ເມື່ອຕາຍໄປຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນເນວະສັນຍານາສັນຍາຍະຕະນະພົບ ເຂົາຈຸຕິຈາກຊັ້ນນັ້ນແລ້ວ ເປັນອາຄາມີກັບມາສູ່ຄວາມເປັນແນວນີ້

ບຸກຄົນລາງຄົນໃນໂລກນີ້ລະໂອຣຳພາຄິຍະສັງໂຍດໄດ້ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ໃນປັດຈຸບັນ ເຂົາພໍໃຈ ພໍໃຈເນວະສັນຍານາສັນຍາຍະຕະນະຊານນັ້ນແລະເຖິງຄວາມດີໃຈກັບເນວະສັນຍານາສັນຍາຍະຕະນະຊານນັ້ນ ເຂົາດຳລົງຢູ່ໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ມັກຢູ່ກັບເນວະສັນຍານາສັນຍາຍະຕະນະຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ເມື່ອຕາຍໄປ ຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທວະດາຊັ້ນ ເນວະສັນຍານາສັນຍາຍະຕະນະພົບ ເຂົາຈຸຕິຈາກຊັ້ນນັ້ນແລ້ວ ເປັນອະນາຄາມີ ບໍ່ກັບມາສູ່ຄວາມເປັນແນວນີ້

ສາຣີບຸດ ນີ້ແລເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ຈຸຕິຈາກກາຍນັ້ນແລ້ວເປັນອາຄາມີ ກັບມາສູ່ຄວາມເປັນແນວນີ້ ນີ້ແລເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ຈຸຕິຈາກກາຍນັ້ນແລ້ວ ເປັນອະນາຄາມີບໍ່ກັບມາສູ່ຄວາມເປັນແນວນີ້"

**ເຈຕະນາສູດທີ ໑ ຈົບ**

# ໔. ວິພັດຕິສູດ

## ວ່າດ້ວຍການຈຳແນກປະຕິສຳພິທາ

[໑໗໔] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ທ່ານທັງຫຼາຍພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດໄດ້ກ່າວເລື້ອງນີ້ ວ່າ

ທ່ານທັງຫຼາຍ ເຮົາອຸປະສົມບົດໄດ້ເຄິ່ງເດືອນໄດ້ເຮັດໃຫ້ແຈ້ງເຊິ່ງອັດຖະປະຕິສຳພິທາ (ປັນຍາແຕກສານໃນອັດຖະ[໔]) ໂດຍເຫດ ໂດຍພະຍັນຊະນະ ເຮົາຈະບອກ[໓] ສະແດງ[໕] ບັນຍັດ[໕] ກຳນົດ[໖] ເປີດເຜີຍ[໗] ຈຳແນກ[໔] ເຮັດໃຫ້ງ່າຍ[໓]ເຊິ່ງອັດຖະປະຕິສຳພິທານັ້ນໂດຍວິທີຕ່າງ ໆ ຜູ້ມີຄວາມສົງໄສຫຼືເຄືອບແຄງເພິ່ງຖາມ ເຮົາພໍໃຈທີ່ຈະຕອບຂໍ້ສົງໄສ ພຣະສາດສະດາຂອງເຮົາທັງຫຼາຍ ຜູ້ຊົງສະຫຼາດດີໃນທຳທັງຫຼາຍ ປະທັບຢູ່ຕໍ່ໜ້າເຮົາທັງຫຼາຍແລ້ວ

ເຮົາອຸປະສົມບົດໄດ້ເຄິ່ງເດືອນໄດ້ເຮັດໃຫ້ແຈ້ງ ທຳມະປະຕິສຳພິທາ (ປັນຍາແຕກສານໃນທຳ) ໂດຍເຫດ ໂດຍພະຍັນຊະນະ ເຮົາຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງທຳມະປະຕິສຳພິທານັ້ນໂດຍວິທີຕ່າງ ໆ ຜູ້ມີຄວາມສົງໄສຫຼືເຄືອບແຄງເພິ່ງຖາມ ເຮົາພໍໃຈທີ່ຈະຕອບຂໍ້ສົງໄສ ພຣະສາດສະດາຂອງເຮົາທັງຫຼາຍ ຜູ້ຊົງສະຫຼາດດີໃນທຳທັງຫຼາຍ ປະທັບຢູ່ຕໍ່ໜ້າເຮົາທັງຫຼາຍແລ້ວ

ເຮົາອຸປະສົມບົດໄດ້ເຄິ່ງເດືອນໄດ້ເຮັດໃຫ້ແຈ້ງນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸກະຕິ) ໂດຍເຫດ ໂດຍພະຍັນຊະນະ ເຮົາຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດ ໃຫ້ງ່າຍເຊິ່ງນິຣຸດຕິປະຕິສຳພິທານັ້ນໂດຍວິທີຕ່າງ ໆ ຜູ້ມີຄວາມສົງໄສຫຼືເຄືອບແຄງເພິ່ງຖາມ ເຮົາພໍໃຈທີ່ຈະຕອບຂໍ້ສົງໄສ ພຣະສາດສະດາຂອງເຮົາທັງຫຼາຍຜູ້ຊົງສະຫຼາດດີໃນທຳທັງຫຼາຍ ປະທັບຢູ່ຕໍ່ໜ້າເຮົາທັງຫຼາຍແລ້ວ

ເຮົາອຸປະສົມບົດໄດ້ເຄິ່ງເດືອນໄດ້ເຮັດໃຫ້ແຈ້ງປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ) ໂດຍເຫດ ໂດຍພະຍັນຊະນະ ເຮົາຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງປະຕິພານປະຕິສຳພິທານັ້ນໂດຍວິທີຕ່າງ ໆ ຜູ້ມີຄວາມສົງໄສຫຼືເຄືອບແຄງເພິ່ງຖາມ ເຮົາພໍໃຈທີ່ຈະຕອບຂໍ້ສົງໄສ ພຣະສາດສະດາຂອງເຮົາທັງຫຼາຍຜູ້ຊົງສະຫຼາດດີໃນທຳທັງຫຼາຍປະທັບຢູ່ຕໍ່ໜ້າເຮົາທັງຫຼາຍແລ້ວ

**ວິພັດຕິສູດທີ ໘ ຈົບ**

## ໙. ມະຫາໂກດຖິຕະສູດ

### ວ່າດ້ວຍພຣະມະຫາໂກດຖິຕະ

[໑໗໙] ຄັ້ງນັ້ນແລ ທ່ານພຣະມະຫາໂກດຖິຕະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ[໑] ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນ[໒] ຍັງມີຢູ່ບໍ[໓]"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

ທ່ານພຣະມະຫາໂກດຖິຕະຖາມວ່າ "ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນບໍ່ມີຢູ່ບໍ[໔]"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນ ທັງມີຢູ່ແລະບໍ່ມີຢູ່ບໍ[໕]"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນ ມີຢູ່ກໍບໍ່ແມ່ນ ບໍ່ມີຢູ່ກໍບໍ່ແມ່ນບໍ[໖]"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

ທ່ານພຣະມະຫາໂກດຖິຕະກ່າວວ່າ "ເມື່ອຂ້ານ້ອຍຖາມວ່າ "ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນຍັງມີຢູ່ບໍ" ທ່ານຕອບວ່າ "ຢ່າກ່າວແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນບໍ່ມີຢູ່ບໍ" ທ່ານກໍຕອບວ່າ "ຢ່າກ່າວແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນທັງມີຢູ່ແລະບໍ່ມີຢູ່ບໍ" ທ່ານກໍຕອບວ່າ "ຢ່າກ່າວແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການ ດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນມີຢູ່ກໍບໍ່ແມ່ນບໍ່ມີຢູ່ກໍບໍ່ແມ່ນບໍ" ທ່ານກໍຕອບວ່າ ຢ່າກ່າວແນວນັ້ນ" ກໍຄຳທີ່ທ່ານກ່າວແລ້ວນີ້ຈະຮູ້ຄວາມໝາຍໄດ້ແນວໃດ"

ທ່ານພຣະສາຣີບຸດກ່າວຕອບວ່າ "ຜູ້ມີອາຍຸ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນຍັງມີຢູ່ບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນບໍ່ມີຢູ່ບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນທັງມີຢູ່ ແລະບໍ່ມີຢູ່ບໍ ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການ ດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນມີຢູ່ກໍບໍ່ແມ່ນ ບໍ່ມີຢູ່ກໍບໍ່ແມ່ນບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ຜູ້ມີອາຍຸ ປະປັນຈະທຳ[໑](ສິ່ງທີ່ຄິດປຸງແຕ່ງ) ຍ່ອມດຳເນີນໄປຕາບທີ່ທີ່ຜັດສາຍະຕະນະ ໖ ດຳເນີນ

ໄປ ຜັດສາຍະຕະນະ ໖ ກໍດຳເນີນໄປຕາບທີ່ທີ່ປະປັນຈະທຳດຳເນີນໄປ ຜູ້ມີອາຍຸ ຍ້ອນຜັດສາ ຍະຕະນະ ໖ ປະການ ດັບໄປບໍ່ເຫຼືອດ້ວຍວິຣາຄະ ປະປັນຈະທຳຈຶ່ງດັບເຢັນ ລະງັບໄປ"

**ມະຫາໂກດຖິຕະສູດທີ ໓ ຈົບ**

# ໔. ອານັນທະສູດ

## ວ່າດ້ວຍພຣະອານົນ

[໑໗໔] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປຫາທ່ານພຣະມະຫາໂກດຖິຕະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂກດຖິຕະດັ່ງນີ້ ວ່າ

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນຍັງມີ ຢູ່ບໍ?"

ທ່ານພຣະມະຫາໂກດຖິຕະຕອບວ່າ "ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

ທ່ານພຣະອານົນຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍ ວິຣາ ຄະ ອັນໃດອື່ນບໍ່ມີຢູ່ບໍ?"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນ ທັງ ມີຢູ່ ແລະບໍ່ມີຢູ່ບໍ?"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

"ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນມີຢູ່ກໍ ບໍ່ແມ່ນ ບໍ່ມີຢູ່ກໍບໍ່ແມ່ນບໍ?"

"ຜູ້ມີອາຍຸ ຢ່າກ່າວແນວນັ້ນ"

ທ່ານພຣະອານົນກ່າວວ່າ "ເມື່ອຂ້ານ້ອຍຖາມວ່າ "ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນຍັງມີຢູ່ບໍ" ທ່ານຕອບວ່າ "ຢ່າກ່າວ ແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນ ບໍ່ມີຢູ່ບໍ" ທ່ານກໍຕອບວ່າ "ຢ່າກ່າວແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນທັງມີຢູ່ແລະບໍ່ມີຢູ່ບໍ" ທ່ານກໍຕອບວ່າ "ຢ່າກ່າວ ແນວນັ້ນ" ເມື່ອຂ້ານ້ອຍຖາມວ່າ "ຍ້ອນ ຜັດສາຍະຕະນະ ໖ ປະການ ດັບໄປບໍ່ເຫຼືອດ້ວຍວິຣາ

ຄະ ອັນໃດອື່ນມີຢູ່ກໍບໍ່ແມ່ນ ບໍ່ມີຢູ່ກໍບໍ່ແມ່ນບໍ" ທ່ານກໍຕອບວ່າ "ຢ່າກ່າວແນວນັ້ນ" ຜູ້ມີອາຍຸ ກໍຄໍາທີ່ທ່ານກ່າວແລ້ວນີ້ຈະຮູ້ຄວາມໝາຍໄດ້ແນວໃດ"

ທ່ານພຣະມະຫາໂກດຖິຕະກ່າວວ່າ "ຜູ້ມີອາຍຸ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນຍັງມີຢູ່ບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນບໍ່ມີຢູ່ບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນທັງມີຢູ່ ແລະບໍ່ມີຢູ່ບໍ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ເມື່ອບຸກຄົນກ່າວວ່າ "ເມື່ອຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ອັນໃດອື່ນມີຢູ່ກໍບໍ່ແມ່ນບໍ່ມີຢູ່ກໍບໍ່ແມ່ນ" ຊື່ວ່າຄິດປຸງແຕ່ງສິ່ງທີ່ບໍ່ຄວນຄິດປຸງແຕ່ງ ທ່ານຜູ້ມີອາຍຸ ປະປັນຈະທໍາຍ່ອມດໍາເນີນໄປຕາບທີ່ທີ່ຜັດສາຍະຕະນະ ໖ ປະການດໍາເນີນໄປ ຜັດສາຍະຕະນະ ໖ ປະການກໍດໍາເນີນໄປ ຕາບທີ່ທີ່ປະປັນຈະທໍາດໍາເນີນໄປ ຜູ້ມີອາຍຸ ຍ້ອນຜັດສາຍະຕະນະ ໖ ປະການດັບໄປບໍ່ເຫຼືອດ້ວຍວິຣາຄະ ປະປັນຈະທໍາຈຶ່ງດັບເຢັນ ລະງັບໄປ"

**ອານັນທະສູດທີ ໔ ຈົບ**

## ໕. ອຸປະວານະສູດ

### ວ່າດ້ວຍພຣະອຸປະວານະ

[໑໗໕] ຄັ້ງນັ້ນແລ ທ່ານພຣະອຸປະວານະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

"ທ່ານສາຣີບຸດ ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາບໍ?"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸ ບໍ່ແມ່ນແນວນີ້"

ທ່ານພຣະອຸປະວານະກ່າວວ່າ "ທ່ານສາຣີບຸດ ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍຈະຣະນະບໍ"

"ຜູ້ມີອາຍຸ ບໍ່ແມ່ນແນວນີ້"

"ທ່ານສາຣີບຸດ ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາແລະຈະຣະນະບໍ?"

"ຜູ້ມີອາຍຸ ບໍ່ແມ່ນແນວນີ້"

"ທ່ານສາຣີບຸດ ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍເຫດນອກຈາກວິດຊາແລະຈະຣະນະບໍ?"

"ຜູ້ມີອາຍຸ ບໍ່ແມ່ນແນວນີ້"

ທ່ານພຣະອຸປະວານະກ່າວວ່າ "ເມື່ອຂ້ານ້ອຍຖາມວ່າ "ທ່ານສາຣີບຸດ ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາບໍ" ທ່ານຕອບວ່າ "ບໍ່ແມ່ນແນວນີ້" ເມື່ອຂ້ານ້ອຍຖາມວ່າ "ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍຈະຣະນະບໍ" ທ່ານກໍຕອບວ່າ "ບໍ່ແມ່ນແນວນີ້" ເມື່ອຂ້ານ້ອຍຖາມວ່າ "ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາແລະຈະຣະນະບໍ" ທ່ານກໍຕອບວ່າ "ບໍ່ແມ່ນແນວນີ້" ເມື່ອຂ້ານ້ອຍຖາມວ່າ "ບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍເຫດນອກຈາກວິດຊາແລະຈະຣະນະບໍ"

ທ່ານກໍຕອບວ່າ "ບໍ່ແມ່ນແນວນີ້" ຜູ້ມີອາຍຸ ກໍບຸກຄົນເຮັດບ່ອນສຸດແຫ່ງທຸກໄດ້ແນວໃດ"

ທ່ານພຣະສາຣີບຸດຕອບວ່າ "ຖ້າບຸກຄົນຈັກເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາແລ້ວ ກໍຈັກມີຄວາມຍຶດໝັ້ນຖືໝັ້ນເຮັດບ່ອນສຸດແຫ່ງທຸກ ຖ້າບຸກຄົນຈັກເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍຈະຣະນະແລ້ວ ກໍຈັກມີຄວາມຍຶດໝັ້ນຖືໝັ້ນເຮັດບ່ອນສຸດແຫ່ງທຸກ ຖ້າບຸກຄົນຈັກເຮັດບ່ອນສຸດແຫ່ງທຸກໄດ້ດ້ວຍວິດຊາ ແລະຈະຣະນະແລ້ວ ກໍຈັກມີຄວາມຍຶດໝັ້ນຖືໝັ້ນເຮັດບ່ອນສຸດແຫ່ງທຸກ ຖ້າບຸກຄົນຈັກເຮັດບ່ອນສຸດແຫ່ງທຸກດ້ວຍເຫດນອກຈາກວິດຊາແລະຈະຣະນະແລ້ວ ປຸຖຸຊົນກໍຈັກເຮັດບ່ອນສຸດແຫ່ງທຸກໄດ້ ຍ້ອນ ປຸຖຸຊົນບໍ່ມີວິດຊາແລະຈະຣະນະ ຜູ້ມີອາຍຸ ບຸກຄົນຜູ້ມີຈະຣະນະວິບັດຍ່ອມບໍ່ຮູ້ບໍ່ເຫັນຕາມຄວາມເປັນຈິງ ບຸກຄົນຜູ້ປະກອບດ້ວຍຈະຣະນະຍ່ອມຮູ້ເຫັນຕາມຄວາມເປັນຈິງ ເມື່ອຮູ້ເຫັນຕາມຄວາມເປັນຈິງຍ່ອມເຮັດບ່ອນສຸດແຫ່ງທຸກໄດ້"

**ອຸປະວານະສູດທີ ໕ ຈົບ**

## ໖. ອາຍາຈະນະສູດ

## ວ່າດ້ວຍຄວາມປາຖະໜາໂດຍຖືກຕ້ອງ

[໑໗໖] "ພິກຂຸທັງຫຼາຍ ພິກຂຸຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບພຣະສາຣີບຸດແລະພຣະໂມກຄັນລານະເທີ້ນ" ສາຣີບຸດແລະໂມກຄັນລານະນີ້ເປັນບັນທັດຖານ ເປັນມາດຕະຖານຂອງພິກຂຸສາວົກຂອງເຮົາ

ພິກຂຸນີຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບພິກຂຸນີເຂມາແລະພິກຂຸນີອຸບົນວັນນາເທີ້ນ" ພິກຂຸນີເຂມາແລະພິກຂຸນີອຸບົນວັນນາ ນີ້ເປັນບັນທັດຖານ ເປັນມາດຕະຖານແຫ່ງພິກຂຸນີສາວິກາຂອງເຮົາ

ອຸປາສົກຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບຈິດຕະຄະຫະບໍດີແລະຫັດຖະກະອຸປາສົກຊາວເມືອງອາລະວີເທີ້ນ" ຈິດຕະຄະຫະບໍດີແລະຫັດຖະກະ-ອຸປາສົກຊາວເມືອງອາລະວີນີ້ເປັນບັນທັດຖານ ເປັນມາດຕະຖານແຫ່ງອຸປາສົກສາວົກຂອງເຮົາ

ອຸປາສິກາຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບອຸປາສິກາຂຸດຊຸດຕະຣາແລະອຸປາສິກາເວລຸກັນຕະກີນັນທະມາຕາເທີ້ນ" ອຸປາສິກາຂຸດຊຸດຕະຣາແລະອຸປາສິກາເວລຸກັນຕະກີນັນທະມາຕານີ້ເປັນບັນທັດຖານ ເປັນມາດຕະຖານຂອງອຸປາສິກາສາວິກາຂອງເຮົາ"

**ອາຍາຈະນະສູດທີ ໖ ຈົບ**

## ໗. ຣາຫຸລະສູດ

## ວ່າດ້ວຍພຣະຣາຫຸນ

[໑໗໗] ຄັ້ງນັ້ນແລ ທ່ານພຣະຣາຫຸນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ຣາຫຸນ ປະຖະວີທາດ (ທາດດິນ) ທັງພາຍໃນແລະພາຍນອກເປັນພຽງແຕ່ວ່າປະຖະວີທາດທໍ່ນັ້ນ ເພິ່ງເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ຍ້ອນເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ແລ້ວ ຈິດຍ່ອມເບື່ອໜ່າຍ ຄາຍກຳໜັດໃນປະຖະວີທາດ

ອາໂປທາດ (ທາດນ້ຳ) ທັງພາຍໃນແລະພາຍນອກກໍເປັນພຽງແຕ່ວ່າອາໂປທາດທໍ່ນັ້ນເພິ່ງເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ຍ້ອນເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ແລ້ວ ຈິດຍ່ອມເບື່ອໜ່າຍ ຄາຍກຳໜັດໃນອາໂປທາດ

ເຕໂຊທາດ (ທາດໄຟ) ທັງພາຍໃນແລະພາຍນອກກໍເປັນພຽງແຕ່ວ່າເຕໂຊທາດທໍ່ນັ້ນເພິ່ງເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ຍ້ອນເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ແລ້ວ ຈິດຍ່ອມເບື່ອໜ່າຍ ຄາຍກຳໜັດໃນເຕໂຊທາດ

ອາໂຍທາດ (ທາດລົມ) ທັງພາຍໃນແລະພາຍນອກກໍເປັນພຽງແຕ່ວ່າອາໂຍທາດທີ່ນັ້ນ ເພິ່ງເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ຍ້ອນເຫັນທຳມະຊາດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ແລ້ວ ຈິດຍ່ອມເບື່ອໜ່າຍ ຄາຍກຳໜັດໃນອາໂຍທາດ

ຣາຫຸນ ຍ້ອນພິຈາລະນາເຫັນວ່າ ໃນທາດ ໔ ນີ້ ບໍ່ມີອັດຕາ ບໍ່ກ່ຽວກັບອັດຕາ ພິກຂຸນີ້ຊື່ວ່າຕັດຕັນຫາໄດ້ແລ້ວ ຖອນສັງໂຍດໄດ້ແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ແລ້ວ ຍ້ອນລະມານະໄດ້ໂດຍຖືກຕ້ອງ"

**ຣາຫຸລະສູດທີ ໗ ຈົບ**

## ໘. ຊຳພາລີສູດ

## ວ່າດ້ວຍບຸກຄົນຜູ້ປຽບດ້ວຍນ້ຳສ້າງໃຫຍ່

[໑໗໘] ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງສັກກາຍະນິໂຣດ[1] ເມື່ອທ່ານມະນະສິການເຖິງສັກກາຍະນິໂຣດ ຈິດຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ບໍ່ນ້ອມໄປໃນສັກກາຍະນິໂຣດ ເມື່ອເປັນແນວນັ້ນ ພິກຂຸນັ້ນບໍ່ເພິ່ງໄດ້ຮັບສັກກາຍະນິໂຣດ ພິກຂຸທັງຫຼາຍ ບຸຣຸດໃຊ້ມືທີ່ເປື້ອນຢາງໜຽວຈັບງ່າໄມ້ ມືຂອງທ່ານເພິ່ງກ່ຽວຈັບຕິດກັບງ່າໄມ້ນັ້ນສັນໃດ ພິກຂຸກໍຄືກັນສັນນັ້ນ ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງສັກກາຍະນິໂຣດ ເມື່ອທ່ານມະນະສິການເຖິງສັກກາຍະນິໂຣດ ຈິດຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ບໍ່ນ້ອມໄປໃນສັກກາຍະນິໂຣດ ເມື່ອເປັນແນວນັ້ນ ພິກຂຸນັ້ນແລບໍ່ເພິ່ງໄດ້ຮັບສັກກາຍະນິໂຣດ

໒. ພິກຂຸໃນທຳວິໄນນີ້ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງສັກກາຍະນິໂຣດ ເມື່ອທ່ານມະນະສິການເຖິງສັກກາຍະນິໂຣດ ຈິດຍ່ອມແລ່ນໄປເຫຼື້ອມໃສ ຕັ້ງໝັ້ນ ນ້ອມໄປໃນສັກກາຍະນິໂຣດ ເມື່ອເປັນແນວນັ້ນ ພິກຂຸນັ້ນເພິ່ງໄດ້ຮັບສັກກາຍະນິໂຣດ ພິກຂຸທັງຫຼາຍ ບຸຣຸດໃຊ້ມືທີ່ສະອາດຈັບງ່າໄມ້ ມືຂອງທ່ານບໍ່ເພິ່ງກ່ຽວຈັບຕິດງ່າໄມ້ນັ້ນສັນໃດ ພິກຂຸກໍຄືກັນສັນນັ້ນ ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງສັກກາຍະນິໂຣດ ເມື່ອທ່ານມະນະສິການເຖິງສັກກາຍະນິໂຣດ ຈິດຍ່ອມແລ່ນໄປ ເຫຼື້ອມໃສ

ຕັ້ງໝັ້ນ ນ້ອມໄປໃນສັກກາຍະນິໂຣດ ເມື່ອເປັນແນວນັ້ນ ພິກຂຸນັ້ນແລເພິ່ງໄດ້ຮັບສັກກາຍະນິໂຣດ

໓. ພິກຂຸໃນທຳວິໄນນີ້ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງການທຳລາຍອະວິດຊາ ເມື່ອທ່ານມະນະສິການເຖິງການທຳລາຍອະວິດຊາ ຈິດຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ບໍ່ນ້ອມໄປໃນການທຳລາຍອະວິດຊາ ເມື່ອເປັນແນວນັ້ນ ພິກຂຸນັ້ນບໍ່ເພິ່ງໄດ້ຮັບການທຳລາຍອະວິດຊາ ພິກຂຸທັງຫຼາຍ ນ້ຳສ້າງໃຫຍ່ມີອາຍຸຫຼາຍປີ ບຸຣຸດອັດທາງໄຫຼເຂົ້າຂອງນ້ຳສ້າງນັ້ນເສຍແລະໄຂທາງໄຫຼອອກໄວ້ ທັງຝົນກໍບໍ່ຕົກເພີ່ມຕາມລະດູ ເມື່ອເປັນແນວນັ້ນ ນ້ຳສ້າງໃຫຍ່ນັ້ນກໍບໍ່ເພິ່ງມີນ້ຳລົ້ນຂອບອອກໄປໄດ້ສັນໃດ ພິກຂຸກໍຄືກັນສັນນັ້ນ ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວ ໜຶ່ງຢູ່ທ່ານມະນະສິການເຖິງການທຳລາຍອະວິດຊາເມື່ອທ່ານມະນະສິການເຖິງການທຳລາຍ ອະວິດຊາ ຈິດຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ບໍ່ນ້ອມໄປໃນການທຳລາຍອະວິດຊາ ເມື່ອເປັນແນວນັ້ນ ພິກຂຸນັ້ນແລບໍ່ເພິ່ງໄດ້ຮັບການທຳລາຍອະວິດຊາ

໔. ພິກຂຸໃນທຳວິໄນນີ້ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງການທຳລາຍອະວິດຊາ ເມື່ອທ່ານມະນະສິການເຖິງການທຳລາຍ ອະວິດຊາ ຈິດຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ນ້ອມໄປໃນການທຳລາຍ ອະວິດຊາ ເມື່ອເປັນແນວນັ້ນ ພິກຂຸນັ້ນເພິ່ງໄດ້ຮັບການທຳລາຍອະວິດຊາ ພິກຂຸທັງຫຼາຍ ນ້ຳສ້າງໃຫຍ່ມີອາຍຸຫຼາຍປີ ບຸຣຸດໄຂທາງໄຫຼເຂົ້າຂອງນ້ຳສ້າງນັ້ນແລະອັດທາງໄຫຼອອກໄວ້ ທັງຝົນກໍຕົກເພີ່ມຕາມລະດູ ເມື່ອເປັນແນວນັ້ນ ນ້ຳສ້າງໃຫຍ່ນັ້ນເພິ່ງມີນ້ຳລົ້ນຂອບອອກໄປໄດ້ສັນໃດ ພິກຂຸກໍຄືກັນສັນນັ້ນ ບັນລຸເຈໂຕວິມຸດຕິອັນສະງົບແນວໃດແນວໜຶ່ງຢູ່ ທ່ານມະນະສິການເຖິງການທຳລາຍອະວິດຊາ ເມື່ອທ່ານມະນະສິການເຖິງການທຳລາຍອະວິດຊາ ຈິດຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ນ້ອມໄປໃນການທຳລາຍອະວິດຊາ ເມື່ອເປັນແນວນັ້ນ ພິກຂຸນັ້ນແລເພິ່ງໄດ້ຮັບການທຳລາຍອະວິດຊາ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ຊຳພາລິສູດທີ ໗ ຈົບ**

## ໘. ນິບພານະສູດ

## ວ່າດ້ວຍນິບພານ

[໑໗໘] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

“ທ່ານສາຣີບຸດ ອັນໃດນໍເປັນເຫດເປັນປັດໄຈ ໃຫ້ສັດລາງພວກໃນໂລກນີ້ບໍ່ນິບພານ ໃນປັດຈຸບັນ”

ທ່ານພຣະສາຣີບຸດຕອບວ່າ “ທ່ານອານົນ ສັດທັງຫຼາຍໃນໂລກນີ້ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນຫານະພາຄິຍະສັນຍາ (ສັນຍາຝ່າຍເສື່ອມ)” ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນຖິຕິພາຄິຍະສັນຍາ (ສັນຍາຝ່າຍດຳລົງ)” ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນວິເສສະພາຄິຍະສັນຍາ (ສັນຍາຝ່າຍວິເສດ)” ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນນິບເພທະພາຄິຍະສັນຍາ (ສັນຍາຝ່າຍທຳລາຍກິເລດ)” ທ່ານອານົນ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ນິບພານໃນປັດຈຸບັນ”

ທ່ານພຣະອານົນຖາມວ່າ “ທ່ານສາຣີບຸດ ອັນໃດເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ນິບພານໃນປັດຈຸບັນ”

ພຣະສາຣີບຸດຕອບວ່າ “ທ່ານອານົນ ສັດທັງຫຼາຍໃນໂລກນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນຫານະພາຄິຍະສັນຍາ” ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນຖິຕິພາຄິຍະສັນຍາ” ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນວິເສສະພາຄິຍະສັນຍາ” ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ເປັນນິບເພທະພາຄິຍະສັນຍາ” ທ່ານອານົນ ນີ້ແລເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ນິບພານໃນປັດຈຸບັນ”

**ນິບພານະສູດທີ ໙ ຈົບ**

## ໑໐. ມະຫາປະເທສະສູດ[໑]

## ວ່າດ້ວຍມະຫາປະເທດ

[໑໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອານັນທະເຈດີ[໒] ໂພກນະຄອນໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ເຮົາຈັກສະແດງມະຫາປະເທດ[໓] ໔ ປະການນີ້ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ” ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ມະຫາປະເທດ ໔ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້າພະເຈົ້າໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີ"ແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນດຳຣັດຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພິກຂຸນີ້ຮັບມາຜິດ" ທ່ານທັງຫຼາຍເພິ່ງຖິ້ມຄຳນັ້ນສາ

ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ນີ້ເປັນທຳ ນີ້ເປັນ ວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ "ນີ້ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພິກຂຸນີ້ຮັບມາດ້ວຍດີ" ທ່ານທັງຫຼາຍເພິ່ງຈື່ມະຫາປະເທດປະການທີ ໑ ນີ້ໄວ້

໒. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ໃນອາວາດຊື່ນັ້ນມີສົງຢູ່ພ້ອມດ້ວຍພຣະເຖຣະພ້ອມດ້ວຍປາໂມກ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າສົງນັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະສົງນັ້ນຮັບມາຜິດ" ທ່ານທັງຫຼາຍເພິ່ງຖິ້ມຄຳນັ້ນສາ

ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ໃນອາວາດຊື່ນັ້ນສົງຢູ່ພ້ອມດ້ວຍພຣະເຖຣະພ້ອມດ້ວຍປາໂມກ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າສົງນັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ "ນີ້ເປັນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະສົງນັ້ນຮັບມາດ້ວຍດີ" ທ່ານທັງຫຼາຍເພິ່ງຈື່ມະຫາປະເທດປະການທີ ໒ ນີ້ໄວ້

໓. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ “ໃນອາວາດຊື່ນັ້ນມີພິກຂຸຜູ້ເປັນເຖຣະຢູ່ຈຳນວນຫຼາຍ ເປັນພະຫູສູດ ຮຽນຈົບຄຳພີ[໑] ຊົງທຳ[໒] ຊົງວິໄນ[໓] ຊົງມາຕິກາ[໔] ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າພຣະເຖຣະເຫຼົ່ານັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ” ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ “ນີ້ບໍ່ແມ່ນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພຣະເຖຣະເຫຼົ່ານັ້ນຮັບມາຜິດ” ທ່ານທັງຫຼາຍເພິ່ງຖິ້ມຄຳນັ້ນສາ

ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ “ໃນອາວາດຊື່ນັ້ນມີພິກຂຸຜູ້ເປັນເຖຣະຢູ່ຈຳນວນຫຼາຍ ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າພຣະເຖຣະເຫຼົ່ານັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ” ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ “ນີ້ເປັນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພຣະເຖຣະເຫຼົ່ານັ້ນ ຮັບມາດ້ວຍດີ” ທ່ານທັງຫຼາຍເພິ່ງຈື່ມະຫາປະເທດປະການທີ ໓ ນີ້ໄວ້

໔. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ “ໃນອາວາດຊື່ນັ້ນມີພິກຂຸຜູ້ເປັນເຖຣະຢູ່ອົງໜຶ່ງ ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າພຣະເຖຣະອົງນັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ” ທ່ານທັງຫຼາຍຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ “ນີ້ບໍ່ແມ່ນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພຣະເຖຣະອົງນັ້ນຮັບມາຜິດ” ທ່ານທັງຫຼາຍເພິ່ງຖິ້ມຄຳນັ້ນສາ

ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ “ໃນອາວາດຊື່ນັ້ນມີພິກຂຸຜູ້ເປັນເຖຣະຢູ່ອົງໜຶ່ງ ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າພຣະເຖຣະອົງນັ້ນວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ” ທ່ານທັງຫຼາຍ ຍັງບໍ່ເພິ່ງຊົມຊື່ນ ຍັງບໍ່ເພິ່ງຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດແລະພະຍັນຊະນະເຫຼົ່ານັ້ນໃຫ້ດີແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດແລະພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ “ນີ້ເປັນດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນ

ຕະສຳມາສຳພຸດທະເຈົ້າພຣະອົງນັ້ນແນ່ນອນ ແລະພຣະເຖຣະອົງນັ້ນ ຮັບມາດ້ວຍດີ" ທ່ານທັງຫຼາຍເພິ່ງຈື່ມະຫາປະເທດປະການທີ ໔ ນີ້ໄວ້

ພິກຂຸທັງຫຼາຍ ມະຫາປະເທດ ໔ ປະການນີ້ແລ"

**ມະຫາປະເທສະສູດທີ ໑໐ ຈົບ**

**ສັນເຈຕະນິຍະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ເຈຕະນາສູດ
໒. ມະຫາໂກດຖິຕະສູດ
໕. ອຸປະວານະສູດ
໗. ຣາຫຸລະສູດ
໙. ນິບພານະສູດ
໔. ວິພັດຕິສູດ
໔. ອານັນທະສູດ
໖. ອາຍາຈະນະສູດ
໘. ຊຳພາລີສູດ
໑໐. ມະຫາປະເທສະສູດ


# ໔. ໂຍທາຊີວະວັກ

## ໝວດວ່າດ້ວຍອົງປະກອບຂອງນັກຮົບອາຊີບ

## ໑. ໂຍທາຊີວະສູດ

### ວ່າດ້ວຍອົງປະກອບຂອງນັກຮົບອາຊີບ

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ນັກຮົບອາຊີບຜູ້ປະກອບດ້ວຍ ອົງ ໔ ປະການຍ່ອມຄູ່ຄວນແກ່ພຣະຣາຊາ ເໝາະແກ່ພຣະຣາຊາ ເຖິງການນັບໄດ້ວ່າເປັນ ຣາດຊະອົງຄະຮັກໂດຍແທ້

ອົງ ໔ ປະການ ອັນໃດແດ່ ຄື

ນັກຮົບອາຊີບໃນໂລກນີ້

໑. ສະຫຼາດໃນຖານະ
໒. ຍິງບໍ່ພາດ
໔. ຍິງລູກສອນໄດ້ໄກ
໔. ທຳລາຍກາຍຂະໜາດໃຫຍ່ໄດ້

ພິກຂຸທັງຫຼາຍ ມ້າອຶບອາຊີບຜູ້ປະກອບດ້ວຍອົງ ໔ ປະການນີ້ແລ ຍ່ອມຄູ່ຄວນແກ່ພຣະຣາຊາ ເໝາະແກ່ພຣະຣາຊາ ເຖິງການນັບວ່າເປັນຣາດຊະອົງຄະອັກໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການກໍຄືກັນສັນນັ້ນ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

| | |
|---|---|
| ໑. ສະຫຼາດໃນຖານະ | ໒. ຍິງລູກສອນໄດ້ໄກ |
| ໓. ຍິງບໍ່ພາດ | ໔. ທຳລາຍກາຍຂະໜາດໃຫຍ່ໄດ້ |

ພິກຂຸສະຫຼາດໃນຖານະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ[1] ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຊື່ວ່າສະຫຼາດໃນຖານະ ເປັນແນວນີ້ແລ

ພິກຂຸຍິງລູກສອນໄດ້ໄກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຮູບແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເວທະນາແນວໃດແນວໜຶ່ງ ຯລຯ ສັນຍາແນວໃດ ແນວໜຶ່ງ ຯລຯ ສັງຂານແນວໃດແນວໜຶ່ງ ຯລຯ ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ພິກຂຸຊື່ວ່າຍິງລູກສອນໄດ້ໄກ ເປັນແນວນີ້ແລ[2]

ພິກຂຸຍິງບໍ່ພາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ພິກຂຸຊື່ວ່າຍິງບໍ່ພາດ ເປັນແນວນີ້ແລ

ພິກຂຸທຳລາຍກາຍຂະໜາດໃຫຍ່ໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ທຳລາຍກອງອະວິດຊາໃຫຍ່ໄດ້ ພິກຂຸຊື່ວ່າທຳລາຍກາຍຂະໜາດໃຫຍ່ໄດ້ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ"

**ໂຍທາຊີວະສູດທີ ໑ ຈົບ**

## ໘. ປາຕິໂພຄະສູດ

## ວ່າດ້ວຍທຳທີ່ບໍ່ມີໃຜປະກັນໄດ້

[໑໘໔] ພິກຂຸທັງຫຼາຍ ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນທຳ ໔ ປະການ

ທຳ ໔ ປະການ ອັນໃດແດ່ ຄື

໑. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມແກ່ເປັນທຳມະດາວ່າ "ບໍ່ແກ່"
໒. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມເຈັບເປັນທຳມະດາວ່າ "ບໍ່ເຈັບ"
໓. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມຕາຍເປັນທຳມະດາວ່າ "ບໍ່ຕາຍ"
໔. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນຜົນແຫ່ງກຳຊົ່ວທີ່ເສົ້າໝອງ ໃຫ້ເກີດ ໃນພົບໃໝ່ ມີທຸກ ເປັນກຳໄລ ມີທຸກເປັນຜົນ ມີຊາດ ຊະຣາ ແລະມໍລະນະຕໍ່ໄປວ່າ "ບໍ່ບັງເກີດ"

ພິກຂຸທັງຫຼາຍ ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກທີ່ຈະປະກັນທຳ ໔ ປະການນີ້ແລ

**ປາຕິໂພຄະສູດທີ ໘ ຈົບ**

## ໙. ສຸຕະສູດ

## ວ່າດ້ວຍສິ່ງທີ່ໄດ້ຟັງ

[໑໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ວັດສະກາຣະພາມຜູ້ເປັນມະຫາອຳມາດແຫ່ງແຄວ້ນມະຄົດ

ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

"ຂ້າແດ່ພຣະໂຄດົມ ຂ້າພະເຈົ້າມີວາທະ[១]ແບບນີ້ ມີທິດຖິແບບນີ້ວ່າ "ຜູ້ໃດຜູ້ໜຶ່ງກ່າວເຖິງສິ່ງທີ່ຕົນເຫັນວ່າ "ເຮົາໄດ້ເຫັນແບບນີ້" ຍ່ອມບໍ່ມີໂທດຍ້ອນການເວົ້ານັ້ນ ຜູ້ໃດຜູ້ໜຶ່ງກ່າວເຖິງສິ່ງທີ່ຕົນໄດ້ຟັງວ່າ "ເຮົາໄດ້ຟັງແບບນີ້" ຍ່ອມບໍ່ມີໂທດຍ້ອນການເວົ້ານັ້ນ ຜູ້ໃດຜູ້ໜຶ່ງ ກ່າວເຖິງສິ່ງທີ່ຕົນຮູ້ວ່າ "ເຮົາໄດ້ຮູ້ແບບນີ້" ຍ່ອມບໍ່ມີໂທດຍ້ອນການເວົ້ານັ້ນ ຜູ້ໃດຜູ້ໜຶ່ງກ່າວເຖິງສິ່ງທີ່ຕົນຮູ້ແຈ້ງວ່າ "ເຮົາໄດ້ຮູ້ແຈ້ງແບບນີ້" ຍ່ອມບໍ່ມີໂທດຍ້ອນການເວົ້ານັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ເຫັນເປັນສິ່ງ ຄວນກ່າວ" ແລະບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ເຫັນເປັນສິ່ງບໍ່ຄວນກ່າວ" ເຮົາບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ຟັງເປັນສິ່ງຄວນກ່າວ" ແລະບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ຟັງເປັນສິ່ງບໍ່ຄວນກ່າວ" ເຮົາບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ຮູ້ເປັນສິ່ງຄວນກ່າວ" ແລະບໍ່ກ່າວວ່າ "ທຸກສິ່ງທີ່ໄດ້ຮູ້ ເປັນສິ່ງບໍ່ຄວນກ່າວ" ເຮົາບໍ່ກ່າວວ່າ "ທຸກສິ່ງທີ່ຮູ້ແຈ້ງເປັນສິ່ງຄວນກ່າວ" ແລະບໍ່ກ່າວວ່າ "ທຸກສິ່ງທີ່ຮູ້ແຈ້ງເປັນສິ່ງບໍ່ຄວນກ່າວ"

ພາມ ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ໄດ້ເຫັນ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມໄປ ເຮົາກ່າວວ່າ "ສິ່ງທີ່ໄດ້ເຫັນແບບນີ້ເປັນສິ່ງບໍ່ຄວນກ່າວ" ແຕ່ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ໄດ້ເຫັນ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຂຶ້ນ ເຮົາກ່າວວ່າ "ສິ່ງທີ່ໄດ້ເຫັນແບບນີ້ ເປັນສິ່ງຄວນກ່າວ"

ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ໄດ້ຟັງ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມໄປ ເຮົາກ່າວວ່າ "ສິ່ງທີ່ໄດ້ຟັງແບບນີ້ເປັນສິ່ງບໍ່ຄວນກ່າວ" ແຕ່ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ໄດ້ຟັງ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຂຶ້ນ ເຮົາກ່າວວ່າ "ສິ່ງທີ່ໄດ້ຟັງແບບນີ້ເປັນສິ່ງຄວນກ່າວ"

ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ໄດ້ຮູ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມໄປ ເຮົາກ່າວວ່າ "ສິ່ງທີ່ໄດ້ຮູ້ແບບນີ້ ເປັນສິ່ງບໍ່ຄວນກ່າວ" ແຕ່ເມື່ອບຸກຄົນກ່າວເຖິງສິ່ງໃດ ທີ່ໄດ້ຮູ້ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຂຶ້ນ ເຮົາກ່າວວ່າ "ສິ່ງທີ່ໄດ້ຮູ້ແບບນີ້ ເປັນສິ່ງຄວນກ່າວ"

ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ຮູ້ແຈ້ງ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມໄປ ເຮົາກ່າວວ່າ "ສິ່ງທີ່ຮູ້ແຈ້ງແບບນີ້ ເປັນສິ່ງບໍ່ຄວນກ່າວ" ແຕ່ເມື່ອບຸກຄົນກ່າວເຖິງສິ່ງໃດທີ່ຮູ້ແຈ້ງ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຂຶ້ນ ເຮົາກ່າວວ່າ "ສິ່ງທີ່ຮູ້ແຈ້ງແບບນີ້ເປັນສິ່ງຄວນກ່າວ"

ຄັ້ງນັ້ນແລ ວັດສະກາຣະພາມຜູ້ເປັນມະຫາອຳມາດແຫ່ງແຄວ້ນມະຄົດຊົມຊື່ນ ຍິນດີພຣະພາ ສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຈາກບ່ອນນັ່ງຈາກໄປ

**ສຸຕະສູດທີ ໖ ຈົບ**

# ໔. ອະພະຍະສູດ

## ວ່າດ້ວຍບຸກຄົນຜູ້ຢ້ານຕາຍແລະຜູ້ບໍ່ຢ້ານຄວາມຕາຍ

[໑໗໔] ຄັ້ງນັ້ນແລ ຊານຸດໂສນິພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ຂ້າພຣະພຸດທະເຈົ້າມີວາທະ°ແນວນີ້ ມີທິດຖິແນວນີ້ວ່າ ສັດຜູ້ມີຄວາມຕາຍເປັນທຳມະດາຊື່ວ່າບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍຍ່ອມບໍ່ມີ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ບຸກຄົນຜູ້ມີຄວາມຕາຍເປັນທຳມະດາຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍມີຢູ່ ແລະບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍກໍມີຢູ່

ບຸກຄົນຜູ້ມີຄວາມຕາຍເປັນທຳມະດາຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າຈຶ່ງມີຄວາມຄິດແນວນີ້ວ່າ "ກາມອັນເປັນທີ່ຮັກຈັກລະເຮົາໄປນໍ ແລະເຮົາກໍຈັກລະກາມອັນເປັນທີ່ຮັກໄປ" ເຂົາຍ່ອມເສົ້າໂສກ ລຳບາກໃຈ ເຮຮົນ ທຸບເອິກຮ່ຳໄຮ ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າຈຶ່ງມີຄວາມຄິດແນວນີ້ວ່າ "ກາຍອັນເປັນທີ່ຮັກ ຈັກລະເຮົາໄປນໍ ແລະເຮົາກໍຈັກລະກາຍອັນເປັນທີ່ຮັກໄປ" ເຂົາຍ່ອມເສົ້າໂສກ ລຳບາກໃຈ ເຮຮົນ ທຸບເອິກຮ່ຳໄຮ ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຍັງບໍ່ໄດ້ເຮັດຄວາມດີໄວ້ ຍັງບໍ່ໄດ້ສ້າງກຸສົນໄວ້ ບໍ່ໄດ້ເຮັດບ່ອນປ້ອງກັນສິ່ງເປັນຕາຢ້ານ ເຮັດແຕ່ຄວາມຊົ່ວ ເຮັດແຕ່ກຳຫຍາບຊ້າ ແລະເຮັດແຕ່ກຳເສົ້າໝອງ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບ

ເຂົ້າ ຈຶ່ງມີຄວາມຄິດແບບນີ້ວ່າ "ເຮົາຍັງບໍ່ໄດ້ເຮັດຄວາມດີໄວ້ນໍ ຍັງບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ເຮັດບ່ອນປ້ອງກັນສິ່ງເປັນຕາຢ້ານໄວ້ ເຮັດແຕ່ຄວາມຊົ່ວ ເຮັດແຕ່ກຳຫຍາບຊ້າ ເຮັດແຕ່ກຳເສົ້າໝອງ ເຮົາຕາຍແລ້ວຈະໄປສູ່ຄະຕິຂອງຜູ້ບໍ່ໄດ້ເຮັດຄວາມດີໄວ້ ບໍ່ໄດ້ເຮັດກຸສົນໄວ້ ບໍ່ໄດ້ເຮັດບ່ອນປ້ອງກັນສິ່ງເປັນຕາຢ້ານ ເຮັດແຕ່ຄວາມຊົ່ວ ເຮັດແຕ່ກຳຫຍາບຊ້າ ເຮັດແຕ່ກຳເສົ້າໝອງນັ້ນ" ເຂົາຍ່ອມເສົ້າໂສກ ລຳບາກໃຈ ເຮຮົນ ທຸບເອິກຮ່ຳໄຮ ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີຄວາມສົງໄສ°ເຄືອບແຄງໃຈ ບໍ່ເຖິງຄວາມຕົກລົງໃຈໃນສັດທຳ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າຈຶ່ງມີຄວາມຄິດແບບນີ້ວ່າ "ເຮົາມີຄວາມສົງໄສເຄືອບແຄງໃຈ ບໍ່ເຖິງຄວາມຕົກລົງໃຈໃນສັດທຳນໍ" ເຂົາຍ່ອມເສົ້າໂສກ ລຳບາກໃຈ ເຮຮົນ ທຸບເອິກຮ່ຳໄຮ ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ຢ້ານເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ພາມ ບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ໔ ຈຳພວກນີ້ແລ ຢ້ານ ເຖິງຄວາມສະດຸ້ງຕໍ່ຄວາມຕາຍ ບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ ເປັນແບບ ໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ປາສະຈາກຄວາມກຳໜັດປາສະຈາກຄວາມພໍໃຈ ປາສະຈາກ ຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມຢາກໃນກາມທັງຫຼາຍ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກ ລາງແບບກະທົບເຂົ້າກໍບໍ່ມີຄວາມຄິດແບບນີ້ວ່າ "ກາມອັນເປັນທີ່ຮັກຈັກລະເຮົາໄປນໍ ແລະເຮົາກໍຈັກລະກາມອັນເປັນທີ່ຮັກໄປ" ເຂົາຍ່ອມບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ເຮຮົນ ບໍ່ທຸບເອິກ ຮ່ຳໄຮ ບໍ່ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມຢາກໃນກາມທັງຫຼາຍ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າກໍບໍ່ມີຄວາມຄິດແບບນີ້ວ່າ "ກາຍອັນເປັນທີ່ຮັກຈັກລະເຮົາໄປນໍ ແລະເຮົາກໍຈັກລະກາຍອັນເປັນທີ່ຮັກໄປ" ເຂົາຍ່ອມບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ເຮຮົນ ບໍ່ທຸບເອິກຮ່ຳໄຮ ບໍ່ເຖິງຄວາມເລີເລືອນ" ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ໄດ້ທຳຄວາມຊົ່ວໄວ້ ບໍ່ໄດ້ເຮັດກຳຫຍາບຊ້າໄວ້ ບໍ່ໄດ້ເຮັດກຳເສົ້າໝອງໄວ້ ເຮັດແຕ່ຄວາມດີ ເຮັດແຕ່ກຸສົນ ແລະເຮັດບ່ອນປ້ອງກັນສິ່ງເປັນ

ຕາຢ້ານ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າຈຶ່ງມີຄວາມຄິດແນວນີ້ວ່າ “ເຮົາບໍ່ໄດ້ທຳຄວາມຊົ່ວນໍ ບໍ່ໄດ້ເຮັດກຳຫຍາບຊ້າ ບໍ່ໄດ້ເຮັດກຳເສົ້າໝອງ ເຮັດແຕ່ຄວາມດີ ເຮັດແຕ່ກຸສົນ ແລະເຮັດບ່ອນປ້ອງກັນສິ່ງເປັນຕາຢ້ານໄວ້ ເຮົາຕາຍແລ້ວຈະໄປສູ່ຄະຕິຂອງຜູ້ບໍ່ໄດ້ທຳຄວາມຊົ່ວໄວ້ ບໍ່ໄດ້ເຮັດກຳຫຍາບຊ້າ ເຮັດແຕ່ຄວາມດີ ເຮັດແຕ່ກຸສົນ ແລະເຮັດບ່ອນປ້ອງກັນສິ່ງເປັນຕາຢ້ານໄວ້ນັ້ນ” ເຂົາຍ່ອມບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ເຮຮົນ ບໍ່ທຸບເອິກຮ່ຳໄຮ ບໍ່ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ຍັງມີອີກ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ມີຄວາມສົງໄສເຄືອບແຄງໃຈ ເຖິງຄວາມຕົກລົງໃຈໃນສັດທຳ ພະຍາດໜັກບາງຢ່າງກະທົບເຂົາເຂົ້າ ເມື່ອເຂົາຖືກພະຍາດໜັກບາງຢ່າງກະທົບເຂົ້າຈຶ່ງມີຄວາມຄິດແນວນີ້ວ່າ “ເຮົາບໍ່ມີຄວາມສົງໄສ ບໍ່ເຄືອບແຄງໃຈເຖິງຄວາມຕົກລົງໃຈໃນສັດທຳ” ເຂົາຍ່ອມບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ເຮຮົນ ບໍ່ທຸບເອິກຮ່ຳໄຮ ບໍ່ເຖິງຄວາມເລີເລືອນ ນີ້ແລຄືບຸກຄົນຜູ້ມີຄວາມຕາຍເປັນທຳມະດາບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ

ພາມ ບຸກຄົນຜູ້ມີຄວາມຕາຍເປັນທຳມະດາ ໔ ຈຳພວກນີ້ແລບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງຕໍ່ຄວາມຕາຍ”

ຊານຸດໂສນີພາມໄດ້ຂາບທູນວ່າ “ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານ ພຣະໂຄດົມຊັດເຈນມ່ວນຫຼາຍ ୯ລ୯໑ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງໄວ້ວ່າເປັນ ອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

**ອະພະຍະສູດທີ ໔ ຈົບ**

## ໕. ສະມະນະສັດຈະສູດ

## ວ່າດ້ວຍສັດຈະທີ່ເປັນເຫດໃຫ້ບໍ່ສຳຄັນຕົນວ່າເປັນສະມະນະ

[໑໘໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນ ຣາດຊະຄຶ ກໍສະໄໝນັ້ນແລ ປະຣິພາຊົກຜູ້ມີຊື່ສຽງຫຼາຍທ່ານ ຄື ອັນນະພາຣະ ວະຣະທອນ ສະກຸລຸທາຍີ ແລະປະຣິພາຊົກທີ່ມີຊື່ສຽງອື່ນ ໆ ອາໄສຢູ່ທີ່ອາຣາມຂອງປະຣິພາຊົກ ແຄມຝັ່ງແມ່ນ້ຳສັບປີນີ

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ໌ ເຂົ້າໄປສູ່ອາຣາມຂອງປະຣິພາຊົກ ແຄມຝັ່ງແມ່ນ້ຳສັບປີນີ

ຂະນະນັ້ນແລ ປະຣິພາຊົກຜູ້ເປັນອັນຍະເດຍຣະຖີເຫຼົ່ານັ້ນ ກຳລັງປະຊຸມສົນທະນາເລື້ອງນີ້ວ່າ "ສັດຈະຂອງພາມເປັນແນວນີ້ ສັດຈະຂອງພາມເປັນແນວນີ້"

ລຳດັບນັ້ນແລ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປຫາປະຣິພາຊົກທັງຫຼາຍເຖິງທີ່ພຳນັກປະທັບ ນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດຖາມປະຣິພາຊົກເຫຼົ່ານັ້ນວ່າ "ປະຣິພາຊົກທັງຫຼາຍ ບັດນີ້ພວກທ່ານນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດນໍ ເລື້ອງອັນໃດທີ່ພວກທ່ານສົນທະນາກັນຄ້າງໄວ້"

ປະຣິພາຊົກທັງຫຼາຍທູນວ່າ "ຂ້າແດ່ທ່ານພຣະໂຄດົມ ສະຖານທີ່ນີ້ ພວກຂ້າພະເຈົ້າມາຊຸມນຸມກັນຕັ້ງບັນຫາສົນທະນາກັນເລື້ອງນີ້ວ່າ "ສັດຈະຂອງພາມເປັນແນວນີ້ ສັດຈະຂອງພາມເປັນແນວນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປະຣິພາຊົກທັງຫຼາຍ ສັດຈະຂອງພາມ ໔ ປະການນີ້ ອັນເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ສັດຈະຂອງພາມ ໔ ປະການ ອັນໃດແດ່ ຄື

໑. ພາມ[໑]ໃນທຳວິໄນນີ້ ກ່າວແນວນີ້ວ່າ "ສັດທັງປວງບໍ່ຄວນຖືກຂ້າ" ພາມເມື່ອກ່າວແນວນີ້ ຊື່ວ່າເວົ້າຈິງ ບໍ່ແມ່ນເວົ້າຕົວະ ຍ້ອນການເວົ້ານັ້ນ ເຂົາຈຶ່ງບໍ່ສຳ ຄັນຕົນວ່າ "ເປັນສະມະນະ" ບໍ່ສຳຄັນຕົນ ວ່າ "ເປັນພາມ" ບໍ່ສຳຄັນຕົນວ່າ "ເປັນຜູ້ປະເສີດກວ່າເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ສະເໝີເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ຕ່ຳຕ້ອຍກວ່າເຂົາ" ແລະເຂົາຮູ້ສັດຈະໃນຂໍ້ປະຕິບັດນັ້ນ ຈຶ່ງປະຕິ ບັດເພື່ອຄວາມ ອີດູ ອະນຸເຄາະສັດທັງຫຼາຍ

໒. ພາມກ່າວແນວນີ້ວ່າ "ການ[໒]ທັງປວງບໍ່ທ່ຽງ ເປັນທຸກ ມີຄວາມຜັນແປໄປເປັນທຳມະດາ" ພາມເມື່ອເວົ້າແນວນີ້ ຊື່ວ່າເວົ້າຈິງ ບໍ່ແມ່ນເວົ້າຕົວະ ຍ້ອນການເວົ້ານັ້ນເຂົາຈຶ່ງບໍ່ສຳຄັນຕົນວ່າ "ເປັນສະມະນະ" ບໍ່ສຳຄັນຕົນວ່າ "ເປັນພາມ" ບໍ່ສຳຄັນຕົນວ່າ "ເປັນຜູ້ປະເສີດກວ່າເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ສະເໝີເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ຕ່ຳຕ້ອຍກວ່າເຂົາ" ແລະເຂົາຮູ້ສັດຈະໃນຂໍ້ປະຕິບັດນັ້ນ ຈຶ່ງປະຕິບັດ ເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບການທັງຫຼາຍ

໓. ພາມກ່າວແນວນີ້ວ່າ "ພົບ[໓]ທັງປວງບໍ່ທ່ຽງ ເປັນທຸກ ມີຄວາມຜັນແປໄປເປັນທຳມະດາ" ພາມເມື່ອເວົ້າແນວນີ້ ຊື່ວ່າເວົ້າຈິງ ບໍ່ແມ່ນເວົ້າຕົວະ ຍ້ອນການເວົ້ານັ້ນເຂົາຈຶ່ງບໍ່ສຳຄັນຕົນວ່າ "ເປັນ ສະມະນະ" ບໍ່ສຳຄັນຕົນວ່າ "ເປັນພາມ" ບໍ່

ສຳຄັນຕົນວ່າ "ເປັນຜູ້ປະເສີດກວ່າເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ສະເໝີເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ຕ່ຳຕ້ອຍກວ່າເຂົາ" ແລະເຂົາຮູ້ສັດຈະໃນຂໍ້ປະຕິບັດນັ້ນ ຈຶ່ງປະຕິບັດ ເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບພົບທັງຫຼາຍ

໔. ພາມກ່າວແນວນີ້ວ່າ "ບໍ່ມີເຮົາ[໗]ເປັນທີ່ກັງວົນຂອງໃຜ ໆ ໃນບ່ອນໃດ ໆ ແລະບໍ່ມີຜູ້ອື່ນ[໘]ເປັນທີ່ກັງວົນຂອງເຮົາໃນບ່ອນໃດ ໆ"[໙] ພາມ ເມື່ອເວົ້າແນວນີ້ ຊື່ວ່າເວົ້າຈິງ ບໍ່ແມ່ນເວົ້າຕົວະ ຍ້ອນການເວົ້ານັ້ນ ເຂົາຈຶ່ງບໍ່ສຳຄັນຕົນວ່າ "ເປັນສະມະນະ" ບໍ່ສຳຄັນຕົນວ່າ "ເປັນພາມ" ບໍ່ສຳຄັນຕົນວ່າ "ເປັນຜູ້ປະເສີດກວ່າເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ສະເໝີເຂົາ" ບໍ່ສຳຄັນຕົນວ່າ "ເປັນຜູ້ຕ່ຳຕ້ອຍກວ່າເຂົາ" ແລະເຂົາຮູ້ສັດຈະໃນຂໍ້ປະຕິບັດນັ້ນ ຈຶ່ງປະຕິບັດປະຕິປະທາທີ່ບໍ່ໃຫ້ກັງວົນ

ປະຣິພາຊົກທັງຫຼາຍ ສັດຈະຂອງພາມ ໔ ປະການນີ້ແລ ອັນເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ"

**ສະມະນະສັດຈະສູດທີ ໕ ຈົບ**

## ໖. ອຸມມັກຄະສູດ

## ວ່າດ້ວຍຜູ້ມີປັນຍາໃຝ່ຮູ້

[໑໘໖] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງ ຜູ້ຈະເລີນ ໂລກອັນອັນໃດນໍແລນຳໄປ ໂລກອັນອັນໃດຊັກນຳມາ ແລະບຸກຄົນຍ່ອມລຸອຳນາດອັນໃດທີ່ເກີດຂຶ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ປັນຍາໃຝ່ຮູ້[໘]ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ທ່ານຖາມແນວນີ້ວ່າ "ໂລກອັນອັນໃດນໍແລນຳໄປ ໂລກອັນອັນໃດຊັກນຳມາ ແລະບຸກຄົນຍ່ອມລຸອຳນາດອັນໃດທີ່ເກີດຂຶ້ນບໍ"

ພິກຂຸຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ໂລກອັນຈິດນຳໄປ ອັນຈິດຊັກນຳມາ ແລະບຸກຄົນຍ່ອມລຸອຳນາດຈິດທີ່ເກີດຂຶ້ນ"

ພິກຂຸນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ສາທຸ ຂ້ານ້ອຍ" ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າ ເປັນພະຫູສູດ ເປັນຜູ້ຊົງທຳ ເປັນພະຫູສູດ ເປັນຜູ້ຊົງທຳ ດ້ວຍເຫດພຽງໃດນໍ ບຸກຄົນຈຶ່ງເປັນພະຫູສູດ ເປັນຜູ້ຊົງທຳ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ສອບຖາມດີ ທ່ານຖາມແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າ ເປັນພະຫູສູດ ເປັນຜູ້ຊົງທຳ ເປັນພະຫູສູດ ເປັນຜູ້ຊົງທຳ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງເປັນພະຫູສູດ ເປັນຜູ້ຊົງທຳບໍ?"

ພິກຂຸຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ເຮົາສະແດງທຳຫຼວງຫຼາຍ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ຖ້າແມ່ນພິກຂຸ ຮູ້ອັດຖະ ຮູ້ທຳແຫ່ງຄາຖາ ໔ ບາດແລ້ວ ປະຕິບັດທຳສົມຄວນແກ່ທຳ[9] ກໍຄວນຮຽກວ່າ ເປັນພະຫູສູດ ເປັນຜູ້ຊົງທຳ"

ພິກຂຸນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ສາທຸ ຂ້ານ້ອຍ" ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປອີກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າຜູ້ສະດັບ ມີປັນຍາທຳລາຍກິເລດ ຜູ້ສະດັບ ມີປັນຍາທຳລາຍກິເລດ ດ້ວຍເຫດພຽງທໍ່ໃດນໍແລ ບຸກຄົນຈຶ່ງເປັນຜູ້ສະດັບ ມີປັນຍາທຳລາຍກິເລດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ທ່ານຖາມແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າຜູ້ສະດັບ ມີປັນຍາທຳລາຍກິເລດ ຜູ້ສະດັບ ມີປັນຍາທຳລາຍກິເລດ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນ ຈຶ່ງເປັນຜູ້ສະດັບ ມີປັນຍາທຳລາຍກິເລດບໍ"

ພິກຂຸຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປອີກວ່າ "ພິກຂຸໃນທຳວິໄນນີ້ໄດ້ສະດັບວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ແລະເຫັນແຈ້ງແທງຕະຫຼອດເນື້ອຄວາມແຫ່ງຄຳທີ່ສະດັບນັ້ນດ້ວຍ ປັນຍາ ບຸກຄົນຜູ້ສະດັບ ມີປັນຍາທຳລາຍກິເລດ ເປັນແນວນີ້ແລ"

ພິກຂຸນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ສາທຸ ຂ້ານ້ອຍ" ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປອີກວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າເປັນບັນທິດ ມີປັນຍາຫຼາຍ ເປັນບັນດິດ ມີປັນຍາຫຼາຍ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງເປັນບັນດິດ ມີປັນຍາຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ທ່ານຖາມແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກວ່າເປັນບັນດິດ ມີປັນຍາຫຼາຍ ເປັນບັນດິດ ມີປັນຍາຫຼາຍ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງເປັນບັນດິດ ມີປັນຍາຫຼາຍບໍ"

ພິກຂຸຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ບຸກຄົນໃນທຳວິໄນນີ້ເປັນບັນດິດ ມີປັນຍາຫຼາຍ ຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນ ໔ ຝ່າຍ ເມື່ອຄິດຍ່ອມຄິດເກື້ອກູນຕົນເອງ ເກື້ອກູນຜູ້ອື່ນ ເກື້ອກູນ ໔ ຝ່າຍ ແລະເກື້ອກູນ ຊາວໂລກທັງໝົດຢ່າງແນ່ນອນ ບຸກຄົນເປັນບັນດິດ ມີປັນຍາຫຼາຍ ເປັນແນວນີ້ແລ"

**ອຸມມັກຄະສູດທີ ໖ ຈົບ**

## ໗. ວັດສະກາຣະສູດ

### ວ່າດ້ວຍວັດສະກາຣະພາມ

[໑໗໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ວັດສະກາຣະພາມຜູ້ເປັນມະຫາອຳມາດແຫ່ງແຄວ້ນມະຄົດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ທ່ານພຣະໂຄດົມ ອະສັດຕະບຸຣຸດ[๑]ຈະເພິ່ງຮູ້ຈັກອະສັດຕະບຸຣຸດໄດ້ບໍວ່າບຸກຄົນນີ້ເປັນອະສັດຕະບຸຣຸດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າ ບຸກຄົນນີ້ເປັນອະສັດຕະບຸຣຸດ ເປັນເລື້ອງທີ່ເປັນໄປບໍ່ໄດ້"

ວັດສະກາຣະພາມໄດ້ທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ອະສັດຕະບຸຣຸດຈະເພິ່ງຮູ້ຈັກ ສັດຕະບຸຣຸດໄດ້ບໍວ່າບຸກຄົນນີ້ເປັນສັດຕະບຸຣຸດ"

"ພາມ ແມ່ນຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກສັດຕະບຸຣຸດວ່າບຸກຄົນນີ້ເປັນສັດຕະບຸຣຸດກໍເປັນເລື້ອງທີ່ເປັນໄປບໍ່ໄດ້"

"ຂ້າແດ່ ທ່ານພຣະໂຄດົມ ສັດຕະບຸຣຸດ໌ເພິ່ງຮູ້ຈັກສັດຕະບຸຣຸດໄດ້ບໍວ່າບຸກຄົນນີ້ເປັນສັດຕະບຸຣຸດ"

"ພາມ ຂໍ້ທີ່ສັດຕະບຸຣຸດເພິ່ງຮູ້ຈັກສັດຕະບຸຣຸດວ່າບຸກຄົນນີ້ເປັນສັດຕະບຸຣຸດ ເປັນເລື້ອງທີ່ເປັນໄປໄດ້"

"ຂ້າແດ່ ທ່ານພຣະໂຄດົມ ສັດຕະບຸຣຸດເພິ່ງຮູ້ຈັກອະສັດຕະບຸຣຸດໄດ້ບໍວ່າບຸກຄົນນີ້ເປັນອະສັດຕະບຸຣຸດ"

"ພາມ ແມ່ນຂໍ້ທີ່ສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າບຸກຄົນນີ້ເປັນອະສັດຕະບຸຣຸດກໍເປັນເລື້ອງທີ່ເປັນໄປໄດ້"

ວັດສະກາຣະພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທ່ານພຣະໂຄດົມຕັດເລື້ອງນີ້ໄວ້ດີຍິ່ງວ່າ "ຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າ ບຸກຄົນນີ້ເປັນອະສັດຕະບຸຣຸດ ເປັນເລື້ອງທີ່ເປັນໄປບໍ່ໄດ້ ແມ່ນຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກສັດຕະບຸຣຸດວ່າ ບຸກຄົນນີ້ເປັນສັດຕະບຸຣຸດ ເປັນເລື້ອງທີ່ເປັນໄປບໍ່ໄດ້ ຂໍ້ທີ່ສັດຕະບຸຣຸດຈະເພິ່ງຮູ້ຈັກສັດຕະບຸຣຸດວ່າ ບຸກຄົນນີ້ເປັນສັດຕະບຸຣຸດ ກໍເປັນເລື້ອງທີ່ເປັນໄປໄດ້ ແມ່ນຂໍ້ທີ່ສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າ ບຸກຄົນນີ້ເປັນອະສັດຕະບຸຣຸດ ກໍເປັນເລື້ອງທີ່ເປັນໄປໄດ້"

ຂ້າແດ່ທ່ານພຣະໂຄດົມ ສະໄໝໜຶ່ງ ໃນບໍລິສັດຂອງໂຕເທີຍຍະພາມ ພວກບໍລິສັດກ່າວຕິຕຽນຜູ້ອື່ນວ່າ "ພຣະເຈົ້າເອເລີຍຍະນີ້ຜູ້ເຫຼື້ອມໃສຍິ່ງໃນສະມະນະຣາມະບຸດ ຊຶ່ງເປັນຜູ້ໂງ່ຈ້າ ແລະຊຶ່ງທຳຄວາມເຄົາລົບຢ່າງຍິ່ງປານນີ້ ຄື ຊຶ່ງໄຫວ້ ຊຶ່ງລຸກຮັບ ຊຶ່ງທຳອັນຊະລີກຳແລະສາມີຈິກຳໃນສະມະນະຣາມະບຸດ ແມ່ນພວກຂ້າຣາດຊະບໍຣິພານຂອງພຣະເຈົ້າເອເລີຍຍະນີ້ ຄື ຍະມະກະ ໂມກຄັນລະ ອຸກຄະ ນາວິນາກີ ຄັນທັບພະ ແລະອັກຄິເວດສະ ຜູ້ເຫຼື້ອມໃສຍິ່ງໃນສະມະນະຣາມະບຸດເປັນຜູ້ໂງ່ຈ້າ ທຳຄວາມເຄົາລົບຢ່າງຍິ່ງປານນີ້ ຄື ໄຫວ້ ລຸກຮັບ ທຳອັນຊະລີກຳແລະສາມີຈິກຳໃນສະມະນະຣາມະບຸດ ສ່ວນໂຕເທີຍຍະພາມ ແນະນຳບໍລິສັດເຫຼົ່ານັ້ນໂດຍໄນນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍເຂົ້າໃຈເລື້ອງນັ້ນວ່າແນວໃດ ພຣະເຈົ້າເອເລີຍຍະເປັນບັນດິດ ຊຶ່ງສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າຜູ້ສາມາດພິຈາລະນາເຫັນປະໂຫຍດຢ່າງຍິ່ງໃນກິດທີ່ຄວນເຮັດແລະທີ່ຄວນເຮັດອັນຍິ່ງ ໃນຄຳທີ່ຄວນກ່າວແລະທີ່ຄວນກ່າວອັນຍິ່ງ ພວກບໍລິວານຮັບວ່າ ເປັນແນວນັ້ນ ທ່ານຜູ້ຈະເລີນ ພຣະເຈົ້າເອເລີຍຍະເປັນບັນດິດ ຊຶ່ງສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າຜູ້ສາມາດພິຈາລະນາ ເຫັນປະໂຫຍດຢ່າງຍິ່ງໃນກິດທີ່ ຄວນເຮັດແລະທີ່ຄວນເຮັດອັນຍິ່ງ ໃນຄຳທີ່ຄວນກ່າວແລະທີ່ຄວນກ່າວອັນຍິ່ງ"

ໂຕເທີຍຍະພາມກ່າວຕໍ່ໄປວ່າ "ທ່ານຜູ້ຈະເລີນທັງຫຼາຍ ຍ້ອນສະມະນະຣາມະບຸດເປັນຜູ້ສະຫຼາດກວ່າພຣະເຈົ້າເອເລີຍຍະ ເປັນຜູ້ສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າ ສັນນັ້ນ

ພຣະເຈົ້າເອເລີຍຍະຈຶ່ງເຫຼື້ອມໃສຍິ່ງໃນສະມະນະຣາມະບຸດແລະຊົງທຳຄວາມເຄົາລົບຢ່າງຍິ່ງເຫັນປານນີ້ ຄື ຊົງໄຫວ້ ຊົງລຸກຮັບ ຊົງທຳອັນຊະລີກຳແລະສາມີຈິກຳໃນສະມະນະຣາມະບຸດ

ທ່ານຜູ້ຈະເລີນທັງຫຼາຍເຂົ້າໃຈເລື້ອງນັ້ນວ່າແນວໃດ ພວກຂ້າຣາດຊະບໍຣິພານຂອງພຣະເຈົ້າເອເລີຍຍະ ຄື ຍະມະກະ ໂມກຄັນລະ ອຸກຄະ ນາວິນາກີ ຄັນທັບພະ ອັກຄິເວດສະ ເປັນບັນດິດ ສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າຜູ້ສາມາດພິຈາລະນາເຫັນປະໂຫຍດ ຢ່າງຍິ່ງໃນກິດທີ່ຄວນ ເຮັດແລະທີ່ຄວນເຮັດອັນຍິ່ງ ໃນຄຳທີ່ຄວນກ່າວແລະທີ່ຄວນກ່າວອັນຍິ່ງ ພວກບໍລິວານ ຮັບວ່າ ເປັນແນວນັ້ນ ທ່ານຜູ້ຈະເລີນ ພວກຂ້າຣາດຊະບໍຣິພານຂອງພຣະເຈົ້າເອເລີຍຍະ ຄື ຍະມະກະ ໂມກຄັນລະ ອຸກຄະ ນາວິນາກີ ຄັນທັບພະ ອັກຄິເວດສະ ເປັນບັນດິດສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າຜູ້ສາມາດພິຈາລະນາເຫັນປະໂຫຍດຢ່າງຍິ່ງໃນກິດທີ່ຄວນເຮັດແລະທີ່ຄວນເຮັດອັນຍິ່ງ ໃນຄຳທີ່ຄວນກ່າວແລະທີ່ຄວນກ່າວອັນຍິ່ງ"

ໂຕເທີຍຍະພາມກ່າວຕໍ່ໄປວ່າ "ຍ້ອນສະມະນະຣາມະບຸດເປັນບັນດິດຍິ່ງກວ່າພວກຂ້າຣາດຊະບໍຣິພານຜູ້ເປັນບັນດິດຂອງພຣະເຈົ້າເອເລີຍຍະ ເປັນຜູ້ສາມາດພິຈາລະນາເຫັນປະໂຫຍດຍິ່ງກວ່າຜູ້ສາມາດພິຈາລະນາເຫັນປະໂຫຍດຢ່າງຍິ່ງ ໃນກິດທີ່ຄວນເຮັດແລະທີ່ຄວນເຮັດອັນຍິ່ງ ໃນຄຳທີ່ຄວນກ່າວແລະທີ່ຄວນກ່າວອັນຍິ່ງ ດັ່ງນັ້ນ ພວກຂ້າຣາດຊະບໍຣິພານຂອງພຣະເຈົ້າເອເລີຍຍະ ຈຶ່ງເຫຼື້ອມໃສຍິ່ງໃນສະມະນະຣາມະບຸດແລະທຳຄວາມເຄົາລົບຢ່າງຍິ່ງປານນີ້ ຄື ໄຫວ້ ລຸກຮັບ ທຳອັນຊະລີກຳແລະສາມີຈິກຳໃນສະມະນະຣາມະບຸດ

ຂ້າແດ່ທ່ານພຣະໂຄດົມ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທ່ານພຣະໂຄດົມຕັດເລື້ອງນີ້ໄວ້ດີຍິ່ງວ່າ "ຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າບຸກຄົນນີ້ເປັນອະສັດຕະບຸຣຸດເປັນເລື້ອງທີ່ເປັນໄປບໍ່ໄດ້ ແມ່ນຂໍ້ທີ່ອະສັດຕະບຸຣຸດຈະເພິ່ງຮູ້ຈັກສັດຕະບຸຣຸດວ່າບຸກຄົນນີ້ເປັນສັດຕະບຸຣຸດ ກໍເປັນເລື້ອງທີ່ເປັນໄປບໍ່ໄດ້ ຂໍ້ທີ່ສັດຕະບຸຣຸດຈະເພິ່ງຮູ້ຈັກສັດຕະບຸຣຸດວ່າບຸກຄົນນີ້ເປັນສັດຕະບຸຣຸດ ເປັນເລື້ອງທີ່ເປັນໄປໄດ້ ແມ່ນຂໍ້ທີ່ສັດຕະບຸຣຸດຈະເພິ່ງຮູ້ຈັກອະສັດຕະບຸຣຸດວ່າບຸກຄົນນີ້ເປັນອະສັດຕະບຸຣຸດ ກໍເປັນເລື້ອງທີ່ເປັນໄປໄດ້" ຂ້າແດ່ທ່ານພຣະໂຄດົມ ບັດນີ້ ຂ້າພະເຈົ້າທັງຫຼາຍຂໍທູນລາກັບ ຍ້ອນມີກິດມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍທ່ານຈົ່ງກຳນົດເວລາທີ່ສົມຄວນ ໃນບັດນີ້ເທີ້ນ ພາມ"

ຄັ້ງນັ້ນແລ ວັດສະກາຣະພາມຜູ້ເປັນມະຫາອຳມາດແຫ່ງແຄວ້ນມະຄົດຊົມຊື່ນ ຍິນດີພຣະພາ ສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຈາກບ່ອນນັ່ງຈາກໄປ

**ວັດສະກາຣະສູດທີ ໗ ຈົບ**

# ໗. ອຸປະກະສູດ

## ວ່າດ້ວຍອຸປະກະມັນທິກາບຸດ

[໑໗໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພູຄິດຊະກູດ ເຂດນະຄອນ ຣາດຊະຄື ຄັ້ງນັ້ນແລ ອຸປະກະມັນທິກາບຸດ[໑]ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພະເຈົ້າມີວາທະ[໒]ແນວນີ້ ມີທິດຖິແນວນີ້ວ່າ ຜູ້ໃດຜູ້ໜຶ່ງກ່າວຕິຕຽນຜູ້ອື່ນ ເມື່ອກ່າວຕິຕຽນຜູ້ອື່ນ ຍ່ອມບໍ່ໃຫ້ກຸສົນກຳເກີດຂຶ້ນໂດຍປະການທັງປວງ ເມື່ອບໍ່ໃຫ້ກຸສົນກຳເກີດຂຶ້ນໂດຍປະການທັງປວງ ຍ່ອມຖືກຕິຕຽນກ່າວໂທດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປະກະ ຖ້າບຸກຄົນກ່າວຕິຕຽນຜູ້ອື່ນ ເມື່ອເຂົາກ່າວຕິຕຽນຜູ້ອື່ນ ຍ່ອມບໍ່ໃຫ້ກຸສົນກຳເກີດຂຶ້ນ ເມື່ອບໍ່ໃຫ້ກຸສົນກຳເກີດຂຶ້ນ ຍ່ອມຖືກຕິຕຽນ ກ່າວໂທດ ທ່ານນັ້ນແລ ກ່າວຕິຕຽນຜູ້ອື່ນ ເມື່ອທ່ານກ່າວຕິຕຽນຜູ້ອື່ນ ຍ່ອມບໍ່ໃຫ້ກຸສົນກຳເກີດຂຶ້ນ ເມື່ອບໍ່ໃຫ້ກຸສົນກຳເກີດຂຶ້ນ ຍ່ອມຖືກຕິຕຽນກ່າວໂທດ"

ອຸປະກະມັນທິກາບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເພິ່ງຫາປາທີ່ພໍໂປ່ໂລ່ຂຶ້ນທໍ່ນັ້ນດ້ວຍແຫໃຫຍ່ ແມ່ນສັນໃດ ຂ້າພຣະອົງກໍຄືກັນສັນນັ້ນ ພອກ່າວຂຶ້ນ ທໍ່ນັ້ນ ພຣະຜູ້ມີພຣະພາກເຈົ້າກໍຊົງຈັບດ້ວຍບ້ວງຄືວາທະອັນໃຫຍ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປະກະ ເຮົາບັນຍັດໄວ້ວ່າ "ນີ້ເປັນອະກຸສົນ" ບົດພະຍັນຊະນະ ແລະທຳມະເທດສະໜາຂອງຕະຖາຄົດໃນຂໍ້ນັ້ນປະມານບໍ່ໄດ້ວ່າ "ນີ້ເປັນອະກຸສົນແມ່ນຍ້ອນເຫດນີ້"

ອັນໜຶ່ງ ເຮົາບັນຍັດໄວ້ວ່າ "ອະກຸສົນນີ້ນັ້ນແລຄວນລະສາ" ບົດພະຍັນຊະນະ ແລະທຳມະເທດສະໜາ ຂອງຕະຖາຄົດໃນຂໍ້ນັ້ນປະມານບໍ່ໄດ້ວ່າ "ອະກຸສົນນີ້ຄວນລະສາແມ່ນຍ້ອນເຫດນີ້"

ອັນໜຶ່ງ ເຮົາບັນຍັດໄວ້ວ່າ "ນີ້ເປັນກຸສົນ" ບົດພະຍັນຊະນະ ແລະທຳມະເທດສະໜາຂອງຕະຖາຄົດ ໃນຂໍ້ນັ້ນປະມານບໍ່ໄດ້ວ່າ "ນີ້ເປັນກຸສົນແມ່ນຍ້ອນເຫດນີ້" ອັນໜຶ່ງ ເຮົາບັນຍັດໄວ້ວ່າ "ກຸສົນນີ້ ນັ້ນແລຄວນຈະເລີນ" ບົດພະຍັນຊະນະ ແລະທຳມະເທດສະໜາຂອງຕະຖາຄົດໃນຂໍ້ນັ້ນປະມານບໍ່ໄດ້ວ່າ "ກຸສົນນີ້ຄວນຈະເລີນແມ່ນຍ້ອນເຫດນີ້"

ລຳດັບນັ້ນແລ ອຸປະກະມັນທິກາບຸດຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກ ຈາກບ່ອນນັ່ງຖວາຍອະພິວາດທຳປະທັກຂິນ[๑]ແລ້ວ ເຂົ້າໄປເຝົ້າພຣະເຈົ້າແຜ່ນດິນມະຄົດ ພຣະນາມວ່າ ອະຊາດສັດຕູ ເວເທຫິບຸດ ໄດ້ຂາບທູນການສົນທະນາກັບພຣະຜູ້ມີພຣະພາກເຈົ້າ ທັງໝົດແດ່ພຣະເຈົ້າ ແຜ່ນດິນມະຄົດພຣະນາມວ່າອະຊາດສັດຕູ ເວເທຫິບຸດ

ຄັນເມື່ອອຸປະກະມັນທິກາບຸດຂາບທູນແນວນີ້ແລ້ວ ພຣະເຈົ້າແຜ່ນດິນມະຄົດພຣະນາມວ່າ ອະຊາດສັດຕູ ເວເທຫິບຸດໂກດ ບໍ່ຊົງພໍພຣະທະໄທ ໄດ້ຕັດກັບອຸປະກະມັນທິກາບຸດວ່າ "ເຈົ້າເດັກນ້ອຍ ລູກຊາວນາເກືອນີ້ອວດດີ ປາກບໍ່ຂອບ ບັງອາດ ຈັກສຳຄັນພຣະຜູ້ມີພຣະພາກ ອະຣະຫັນຕະສຳມາ-ສຳພຸດທະເຈົ້າພຣະອົງນັ້ນວ່າຄວນຮຸກຮານ ເຈົ້າອຸປະກະຈົ່ງໄປສາ ຈົ່ງພິນາດໄປ ຢ່າມາໃຫ້ເຮົາ ເຫັນໜ້າອີກ"

**ອຸປະກະສູດທີ ໙ ຈົບ**

## ໑. ສັດສິກະຣະນີຍະສູດ

### ວ່າດ້ວຍທຳທີ່ຄວນເຮັດໃຫ້ແຈ້ງ

[໑໙໑] ພິກຂຸທັງຫຼາຍ ທຳທີ່ຄວນເຮັດໃຫ້ແຈ້ງ ໔ ປະການນີ້

ທຳທີ່ຄວນເຮັດໃຫ້ແຈ້ງ ໔ ປະການ[๑] ອັນໃດແດ່ ຄື

໑. ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍກາຍ[๒]
໒. ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍສະຕິ[๓]
໓. ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍຈັກຂຸ[๔]
໔. ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍກາຍ ເປັນແນວໃດ?
ຄື ວິໂມກ ໘ ຄວນເຮັດໃຫ້ແຈ້ງດ້ວຍກາຍ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍສະຕິ ເປັນແນວໃດ?
ຄື ປຸບເພນິວາສະ ຄວນເຮັດໃຫ້ແຈ້ງດ້ວຍສະຕິ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍຈັກຂຸ ເປັນແນວໃດ?
ຄື ການຈຸຕິແລະອຸບັດຂອງສັດທັງຫຼາຍ ຄວນເຮັດໃຫ້ແຈ້ງດ້ວຍຈັກຂຸ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາ ເປັນແນວໃດ?

ຄື ຄວາມໝົດສິ້ນອາສະວະທັງຫຼາຍ ຄວນເຮັດໃຫ້ແຈ້ງດ້ວຍປັນຍາ[໓]

ພິກຂຸທັງຫຼາຍ ທຳທີ່ຄວນເຮັດໃຫ້ແຈ້ງ ໔ ປະການນີ້ແລ

**ສັດສິກະຣະນີຍະສູດທີ ໗ ຈົບ**

# ໑໐. ອຸໂປສະຖະສູດ

## ວ່າດ້ວຍຊົງສັນເສີນພິກຂຸໃນມື້ອຸໂປສົດ

[໑໙໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຜາສາດຂອງນາງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ສະໄໝນັ້ນແລ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງຮ້ອມລ້ອມ ປະທັບນັ່ງໃນມື້ອຸໂປສົດນັ້ນ ຊົງກວດເບິ່ງພິກຂຸສົງຜູ້ມິດງຽບ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

"ພິກຂຸທັງຫຼາຍ ບໍລິສັດນີ້ງຽບ ປາສະຈາກສຽງສົນທະນາ ບໍລິສຸດ ຕັ້ງຢູ່ໃນສາຣະ[໑] ພິກຂຸສົງນີ້ ບໍລິສັດນີ້ເປັນຄືບໍລິສັດຫາໄດ້ຍາກແມ່ນເພື່ອຈະເຫັນໃນໂລກ ພິກຂຸສົງນີ້ ບໍລິສັດນີ້ກໍເປັນຄືບໍລິສັດຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ພິກຂຸສົງນີ້ ບໍລິສັດນີ້ກໍເປັນຄືບໍລິສັດທີ່ເຂົາຖວາຍຂອງໜ້ອຍກໍມີຜົນຫຼາຍ ທີ່ເຂົາຖວາຍຂອງຫຼາຍກໍມີຜົນຫຼາຍຍິ່ງຂຶ້ນ ພິກຂຸສົງນີ້ ບໍລິສັດນີ້ກໍຄືບໍລິສັດທີ່ແມ່ນຈະຕ້ອງເດີນທາງໄປເບິ່ງເປັນ ໄລຍະທາງຫຼາຍໂຍດຕ້ອງມີສະບຽງທາງໄປນຳກໍຄວນໄປ

ພິກຂຸທັງຫຼາຍ ພິກຂຸສົງນີ້ປານນີ້ ຄື

ໃນພິກຂຸສົງນີ້

໑. ມີພິກຂຸທັງຫຼາຍຜູ້ເຖິງຄວາມເປັນເທວະດາຢູ່[໒]
໒. ມີພິກຂຸທັງຫຼາຍຜູ້ເຖິງຄວາມເປັນພົມຢູ່[໓]
໓. ມີພິກຂຸທັງຫຼາຍຜູ້ເຖິງຄວາມເປັນອະເນນຊາຢູ່[໔]
໔. ມີພິກຂຸທັງຫຼາຍຜູ້ເຖິງຄວາມເປັນອະຣິຍະຢູ່

ພິກຂຸທັງຫຼາຍຜູ້ເຖິງຄວາມເປັນເທວະດາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ຍ້ອນປິຕິຈາງ ຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່[໖] ພິກຂຸທັງຫຼາຍຜູ້ເຖິງຄວາມເປັນເທວະດາ ເປັນແນວນີ້ແລ

ພິກຂຸທັງຫຼາຍຜູ້ເຖິງຄວາມເປັນພົມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີເມດຕາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ[໗] ທິດເບື້ອງລ່າງ[໘] ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພິກຂຸທັງຫຼາຍຜູ້ເຖິງຄວາມເປັນພົມ ເປັນແນວນີ້ແລ

ພິກຂຸທັງຫຼາຍຜູ້ເຖິງຄວາມເປັນອະເນນຊາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ້ອນລ່ວງຮູບສັນຍາ ຍ້ອນດັບປະຕິຄະສັນຍາ ຍ້ອນບໍ່ມະນະສິການ ນານັດຕະສັນຍາໂດຍປະການທັງປວງ ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ພິກຂຸທັງຫຼາຍ ຜູ້ເຖິງຄວາມເປັນອະເນນຊາ ເປັນແນວນີ້ແລ

ພິກຂຸທັງຫຼາຍຜູ້ເຖິງຄວາມເປັນອະຣິຍະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ພິກຂຸທັງຫຼາຍຜູ້ເຖິງຄວາມເປັນອະຣິຍະ ເປັນແນວນີ້ແລ"

**ອຸໂປສະຖະສູດທີ ໑໐ ຈົບ**

**ໂຍທາຊີວະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ໂຍທາຊີວະສູດ
໒. ສຸຕະສູດ
໓. ສະມະນະສັດຈະສູດ
໔. ວັດສະກາຣະສູດ
໕. ສັດສີກະຣະນີຍະສູດ
໖. ປາຕິໂພຄະສູດ
໗. ອະພະຍະສູດ
໘. ອຸມມັກຄະສູດ
໙. ອຸປະກະສູດ
໑໐. ອຸໂປສະຖະສູດ


# ໕. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

## ໑. ໂສຕານຸຄະຕະສູດ

### ວ່າດ້ວຍທຳທີ່ເຂົ້າເຖິງໂສຕະປະສາດ

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ອານິສົງ ໔ ປະການແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ[?] ອັນບຸກຄົນເພິ່ງຫວັງໄດ້[?]

ອານິສົງ ໔ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ຍ່ອມຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ທຳເຫຼົ່ານັ້ນຂອງພິກຂຸນັ້ນເປັນພາວະເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ທ່ານຫຼົງລືມສະຕິ[?] ເມື່ອຕາຍໄປ ຈະໄປເກີດໃນໝູ່ເທບໝູ່ໃດໝູ່ໜຶ່ງ ບົດແຫ່ງທຳທັງຫຼາຍຍ່ອມຜາກົດ ແກ່ທ່ານຜູ້ມີຄວາມສຸກໃນພົບນັ້ນ ສະຕິເກີດຂຶ້ນຊ້າ[?] ຕໍ່ມາ ທ່ານຣະນຶກໄດ້ ຈຶ່ງບັນລຸຄຸນວິເສດ[?]ທັນທີ ພິກຂຸທັງຫຼາຍນີ້ເປັນອານິສົງປະການທີ ໑ ແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອັນບຸກຄົນເພິ່ງຫວັງໄດ້

໒. ພິກຂຸຍ່ອມຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ທຳເຫຼົ່ານັ້ນ ຂອງພິກຂຸນັ້ນເປັນພາວະເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ທ່ານຫຼົງລືມສະຕິ ເມື່ອຕາຍໄປ ຈະໄປເກີດໃນໝູ່ເທບ ໝູ່ໃດໝູ່ໜຶ່ງ ບົດແຫ່ງທຳທັງຫຼາຍຍ່ອມບໍ່ຜາກົດແກ່ທ່ານຜູ້ມີຄວາມສຸກຢູ່ໃນພົບ

ນັ້ນເລີຍ ແຕ່ພິກຂຸຜູ້ມີລິດ ເຖິງຄວາມຊ່ຽວຊານທາງຈິດ ສະແດງທຳແກ່ໝູ່ເທບ ທ່ານມີຄວາມຄິດແນວນີ້ວ່າ "ນີ້ຄືທຳວິໄນທີ່ເຮົາເຄີຍປະພຶດພົມມະຈັນ" ສະຕິເກີດຂຶ້ນຊ້າ ຕໍ່ມາ ທ່ານຣະນຶກໄດ້ ຈຶ່ງບັນລຸຄຸນວິເສດທັນທີ

ພິກຂຸຍ່ອມຮ່ຳຮຽນທຳ ໆລໆ ຈຶ່ງບັນລຸຄຸນວິເສດທັນທີ ປຽບຄືບຸຣຸດຜູ້ສະຫຼາດໃນສຽງກອງ ເຂົາເດີນທາງໄກ ເພິ່ງໄດ້ຍິນສຽງກອງ ເຂົາບໍ່ເພິ່ງມີຄວາມສົງໄສຫຼືເຄືອບແຄງວ່າ "ແມ່ນສຽງກອງບໍນໍ" ແທ້ທີ່ຈິງ ເຂົາເພິ່ງເຖິງຄວາມຕົກລົງໃຈວ່າ "ເປັນສຽງກອງແນ່ນອນ" ສັນນັ້ນ ພິກຂຸທັງຫຼາຍ ນີ້ເປັນອານິສົງປະການທີ ໔ ແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອັນບຸກຄົນເພິ່ງຫວັງໄດ້

໓. ພິກຂຸຍ່ອມຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ທຳເຫຼົ່ານັ້ນ ຂອງພິກຂຸນັ້ນເປັນພາວະເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ທ່ານຫຼົງລືມສະຕິ ເມື່ອຕາຍໄປຈະໄປເກີດໃນໝູ່ເທບ ໝູ່ໃດໝູ່ໜຶ່ງ ບົດແຫ່ງທຳທັງຫຼາຍຍ່ອມບໍ່ຜາກົດແກ່ທ່ານຜູ້ມີຄວາມສຸກຢູ່ໃນພົບນັ້ນເລີຍ ທັງພິກຂຸຜູ້ມີລິດ ເຖິງຄວາມຊ່ຽວຊານທາງຈິດ ກໍບໍ່ໄດ້ສະແດງທຳແກ່ໝູ່ເທບ ແຕ່ເທບພະບຸດສະແດງທຳໃນໝູ່ເທບ ທ່ານມີ ຄວາມຄິດແນວນີ້ວ່າ "ນີ້ຄືທຳວິໄນທີ່ເຮົາເຄີຍປະພຶດພົມມະຈັນ" ສະຕິເກີດຂຶ້ນຊ້າ ຕໍ່ມາ ທ່ານຣະນຶກໄດ້ ຈຶ່ງບັນລຸຄຸນວິເສດທັນທີ

ພິກຂຸຍ່ອມຮ່ຳຮຽນທຳ ໆລໆ ຈຶ່ງບັນລຸຄຸນວິເສດທັນທີ ປຽບຄືບຸຣຸດຜູ້ສະຫຼາດຕໍ່ສຽງຫອຍສັງ ເຂົາເດີນທາງໄກ ເພິ່ງໄດ້ຍິນ ສຽງຫອຍສັງ ເຂົາບໍ່ເພິ່ງມີຄວາມສົງໄສຫຼືເຄືອບແຄງວ່າ "ແມ່ນສຽງຫອຍສັງບໍນໍ" ແທ້ທີ່ຈິງ ເຂົາເພິ່ງເຖິງຄວາມຕົກລົງໃຈວ່າ "ເປັນສຽງຫອຍສັງແນ່ນອນ" ສັນນັ້ນ ພິກຂຸທັງຫຼາຍ ນີ້ເປັນອານິສົງປະການທີ ໓ ແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອັນບຸກຄົນເພິ່ງຫວັງໄດ້

໔. ພິກຂຸຍ່ອມຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ທຳເຫຼົ່ານັ້ນ ຂອງພິກຂຸນັ້ນເປັນພາວະເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ທ່ານຫຼົງລືມສະຕິ ເມື່ອຕາຍໄປຈະໄປເກີດໃນໝູ່ເທບໝູ່ໃດໝູ່ໜຶ່ງ ບົດແຫ່ງທຳທັງຫຼາຍຍ່ອມບໍ່ຜາກົດແກ່ທ່ານຜູ້ມີຄວາມສຸກຢູ່ໃນພົບນັ້ນເລີຍ ທັງພິກຂຸຜູ້ມີລິດ ເຖິງຄວາມຊ່ຽວຊານທາງຈິດກໍບໍ່ໄດ້ສະແດງທຳແກ່ໝູ່ເທບ ແມ່ນເທບພະບຸດກໍບໍ່ໄດ້ສະແດງທຳແກ່ໝູ່ເທບ ແຕ່ເທບພະບຸດຜູ້ເປັນໂອປະປາຕິກະ[໑]ເຕືອນເທບພະບຸດຜູ້ເປັນໂອປະປາຕິກະວ່າ "ທ່ານຜູ້ນິຣະທຸກ ທ່ານຣະນຶກເຖິງທຳວິໄນທີ່ພວກເຮົາເຄີຍປະພຶດພົມມະຈັນມາໄດ້ບໍ" ທ່ານກ່າວແນວນີ້ວ່າ "ຣະນຶກໄດ້ ຣະນຶກໄດ້ ທ່ານຜູ້ນິຣະທຸກ" ສະຕິເກີດຂຶ້ນຊ້າ ຕໍ່ມາ ທ່ານຣະນຶກໄດ້ ຈຶ່ງບັນລຸຄຸນວິເສດທັນທີ

ພິກຂຸຍ່ອມຮ່ຳຮຽນທຳ ໗ລ໗ ຈຶ່ງບັນລຸຄຸນວິເສດທັນທີ ປຽບຄືສະຫາຍ ໔ ຄົນຜູ້ເຄີຍຫຼິ້ນຝຸ່ນນຳກັນມາພົບກັນລາງເທື່ອບາງເວລາໃນບ່ອນບາງແຫ່ງ ຄົນໜຶ່ງເພິ່ງກ່າວກັບອີກຄົນໜຶ່ງແນວນີ້ວ່າ "ສະຫາຍ ທ່ານຣະນຶກເຖິງກຳນີ້ໄດ້ແດ່ບໍ່" ເຂົາຈຶ່ງກ່າວແນວນີ້ວ່າ "ຣະນຶກໄດ້ ຣະນຶກໄດ້ສະຫາຍ" ສັນນັ້ນ ພິກຂຸທັງຫຼາຍ ນີ້ເປັນອານິສົງ ປະການທີ ໔ ແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອັນບຸກຄົນເພິ່ງຫວັງໄດ້

ພິກຂຸທັງຫຼາຍ ອານິສົງ ໔ ປະການນີ້ແຫ່ງທຳທັງຫຼາຍທີ່ເຂົ້າເຖິງໂສຕະປະສາດ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອັນບຸກຄົນເພິ່ງຫວັງໄດ້

**ໂສຕານຸຄະຕະສູດທີ ໑ ຈົບ**

## ໒. ຖານະສູດ

## ວ່າດ້ວຍຖານະທີ່ເພິ່ງຮູ້ດ້ວຍຖານະ

[໑໙໒] "ພິກຂຸທັງຫຼາຍ ຖານະ ໔ ປະການນີ້ອັນບຸກຄົນເພິ່ງຮູ້ໄດ້ດ້ວຍຖານະ ໔ ປະການ

ຖານະ ໔ ປະການ ອັນໃດແດ່ ຄື

໑. ສີນເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ແລະສີນນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການຈະຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້
໒. ຄວາມບໍລິສຸດເພິ່ງຮູ້ໄດ້ດ້ວຍຄຳເວົ້າ ແລະຄວາມບໍລິສຸດນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້
໓. ກຳລັງເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ແລະກຳລັງນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້
໔. ປັນຍາເພິ່ງຮູ້ໄດ້ດ້ວຍການສົນທະນາ ແລະປັນຍານັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ສີນເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ແລະສີນນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ບຸກຄົນໃນໂລກນີ້ເມື່ອຢູ່ຮ່ວມກັນ ຈຶ່ງຮູ້ແບບນີ້ວ່າ "ທ່ານຜູ້ນີ້ມີປົກກະຕິເຮັດໃຫ້ຂາດ ເຮັດໃຫ້ຊອດ ເຮັດໃຫ້ດ່າງ ເຮັດໃຫ້ພ້ອຍ ບໍ່ເຮັດຕໍ່ເນື່ອງ ບໍ່ປະພຶດຕໍ່ເນື່ອງໃນສີນທັງຫຼາຍຕະຫຼອດການລະນານແລ ທ່ານຜູ້ນີ້ເປັນຜູ້ທຸສີນ ບໍ່ແມ່ນເປັນຜູ້ມີສີນ"

ອັນໜຶ່ງ ບຸກຄົນໃນໂລກນີ້ເມື່ອຢູ່ຮ່ວມກັນ ຈຶ່ງຮູ້ແບບນີ້ວ່າ "ທ່ານຜູ້ນີ້ມີປົກກະຕິບໍ່ເຮັດໃຫ້ຂາດ ບໍ່ເຮັດໃຫ້ຊອດ ບໍ່ເຮັດໃຫ້ດ່າງ ບໍ່ເຮັດໃຫ້ພ້ອຍ ມີປົກກະຕິເຮັດຕໍ່ເນື່ອງ ປະພຶດຕໍ່ເນື່ອງໃນສີນທັງຫຼາຍຕະຫຼອດການລະນານແລ ທ່ານຜູ້ນີ້ເປັນຜູ້ມີສີນ ບໍ່ແມ່ນເປັນຜູ້ທຸສີນ"

ຂໍ້ທີ່ເຮົາກ່າວວ່າ "ສີນເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ແລະສີນນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ເຮົາກ່າວຍ້ອນອາໄສເຫດນີ້

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ຄວາມບໍລິສຸດເພິ່ງຮູ້ໄດ້ດ້ວຍຄຳເວົ້າ ແລະຄວາມບໍລິສຸດນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ບຸກຄົນໃນໂລກນີ້ເມື່ອສົນທະນາກັນ ຈຶ່ງຮູ້ແບບນີ້ວ່າ "ທ່ານຜູ້ນີ້ເວົ້າກັນໂຕຕໍ່ໂຕເປັນແບບໜຶ່ງ ເວົ້າກັບຄົນສອງຄົນເປັນແບບໜຶ່ງ ເວົ້າກັບຄົນສາມະຄົນເປັນແບບໜຶ່ງ ເວົ້າກັບຄົນຫຼາຍຄົນເປັນແບບ ໜຶ່ງ ທ່ານຜູ້ນີ້ເວົ້າເວລາຫຼັງຕ່າງໆໄປຈາກເວົ້າເວລາກ່ອນ ທ່ານຜູ້ນີ້ມີຄຳເວົ້າບໍ່ບໍລິສຸດ ມີຄຳເວົ້າບໍ່ລິສຸດ"

ອັນໜຶ່ງ ບຸກຄົນໃນໂລກນີ້ເມື່ອສົນທະນາກັນ ຈຶ່ງຮູ້ແບບນີ້ວ່າ "ທ່ານຜູ້ນີ້ເວົ້າກັນໂຕຕໍ່ໂຕເປັນແບບໃດ? ເວົ້າກັບຄົນສອງຄົນ ສາມະຄົນ ຫຼາຍຄົນກໍແບບນັ້ນ ທ່ານຜູ້ນີ້ເວົ້າເວລາຫຼັງ ກໍບໍ່ຕ່າງໆຈາກເວົ້າເວລາກ່ອນ ທ່ານຜູ້ນີ້ມີຄຳເວົ້າບໍລິສຸດ ບໍ່ແມ່ນມີຄຳເວົ້າບໍ່ບໍລິສຸດ"

ຂໍ້ທີ່ເຮົາກ່າວວ່າ "ຄວາມບໍລິສຸດເພິ່ງຮູ້ໄດ້ດ້ວຍຄຳເວົ້າ ແລະຄວາມບໍລິສຸດນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ເຮົາກ່າວຍ້ອນອາໄສເຫດນີ້

ເຮົາກ່າວເຊັ່ນນີ້ແລວ່າ "ກໍາລັງເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ແລະກໍາລັງນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ບຸກຄົນລາງຄົນໃນໂລກນີ້ປະສົບຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຫຼື ຄວາມເສື່ອມຍ້ອນພະຍາດ ຍ່ອມບໍ່ພິຈາລະນາເຫັນແນວນີ້ວ່າ "ໂລກສັນນິວາດນີ້ເປັນແນວນີ້ເອງ ການໄດ້ອັດຕະພາບນີ້ເປັນແນວນັ້ນໃນໂລກສັນນິວາດຕາມຄວາມເປັນຈິງ ໃນການໄດ້ອັດຕະພາບຕາມຄວາມເປັນຈິງ ໂລກກະທໍາ ໘ ຄື (໑) ໄດ້ລາບ (໒) ເສື່ອມລາບ (໓) ໄດ້ຍົດ (໔) ເສື່ອມຍົດ (໕) ນິນທາ (໖) ສັນເສີນ (໗) ສຸກ (໘) ທຸກ ໝຸນວຽນໄປຕາມໂລກ ແລະໂລກກໍໝຸນວຽນໄປຕາມໂລກກະທໍາ ໘" ບຸກຄົນນັ້ນປະສົບຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຫຼືຄວາມເສື່ອມຍ້ອນພະຍາດ ຍ່ອມເສົ້າໂສກ ລໍາບາກໃຈ ເຮຮົນ ທຸບເອິກຮໍ່າໄຮ ເຖິງ ຄວາມເລີເລືອນ

ສ່ວນບຸກຄົນລາງຄົນໃນໂລກນີ້ປະສົບຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຫຼືຄວາມເສື່ອມຍ້ອນພະຍາດ ຍ່ອມພິຈາລະນາເຫັນແນວນີ້ວ່າ "ໂລກສັນນິວາດນີ້ເປັນແນວນີ້ເອງ ການໄດ້ອັດຕະພາບນີ້ເປັນແນວນັ້ນໃນໂລກສັນນິວາດຕາມຄວາມເປັນຈິງ ໃນການໄດ້ອັດຕະພາບຕາມຄວາມເປັນຈິງ ໂລກກະທໍາ ໘ ຄື (໑) ໄດ້ລາບ (໒) ເສື່ອມລາບ (໓) ໄດ້ຍົດ (໔) ເສື່ອມຍົດ (໕) ນິນທາ (໖) ສັນເສີນ (໗) ສຸກ (໘) ທຸກ ໝຸນວຽນໄປຕາມໂລກ ແລະໂລກກໍໝຸນວຽນໄປຕາມໂລກກະທໍາ ໘" ບຸກຄົນນັ້ນປະສົບຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຫຼືຄວາມເສື່ອມຍ້ອນພະຍາດ ຍ່ອມບໍ່ເສົ້າໂສກ ບໍ່ລໍາບາກໃຈ ບໍ່ເຮຮົນ ບໍ່ທຸບເອິກຮໍ່າໄຮ ບໍ່ເຖິງຄວາມເລີເລືອນ

ຂໍ້ທີ່ເຮົາກ່າວວ່າ "ກໍາລັງເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ແລະກໍາລັງນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ເຮົາກ່າວຍ້ອນອາໄສເຫດນີ້

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ປັນຍາເພິ່ງຮູ້ໄດ້ດ້ວຍການສົນທະນາ ແລະປັນຍານັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ບຸກຄົນລາງຄົນໃນໂລກນີ້ເມື່ອສົນທະນາກັນ ຈຶ່ງຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີການສະແຫວງຫາບັນຫາ[໑]ແນວໃດ ກຽມບັນຫາ[໒]ແນວໃດ ແລະຖາມບັນຫາແນວໃດ ທ່ານຜູ້ນີ້ມີປັນຍາຊາມ ບໍ່ແມ່ນມີປັນຍາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານຜູ້ນີ້ບໍ່ອ້າງບົດທີ່ມີຄວາມໝາຍ ເລິກເຊິ່ງ ສະງົບ ປະນີດ ທີ່ສາມັນຊົນຄາດບໍ່ເຖິງ ລະອຽດ ອັນບັນດິດເພິ່ງຮູ້ໄດ້ ທ່ານຜູ້ນີ້ກ່າວທໍາອັນໃດ ກໍບໍ່

ສາມາດຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງເນື້ອຄວາມແຫ່ງທຳນັ້ນທັງໂດຍຫຍໍ້ຫຼືໂດຍພິດສະດານ ທ່ານຜູ້ນີ້ມີປັນຍາຊາມ ບໍ່ແມ່ນມີປັນຍາດີ"

ບຸກຄົນເມື່ອສົນທະນາກັນ ຈຶ່ງຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີການສະແຫວງຫາບັນຫາແນວໃດ ຯລຯ ທ່ານຜູ້ນີ້ມີປັນຍາຊາມ ບໍ່ແມ່ນມີປັນຍາ" ປຽບຄືບຸກຄົນຜູ້ມີຕາດີຢືນຢູ່ ແຄມຝັ່ງແມ່ນ້ຳ ເພິ່ງເຫັນປາໂຕນ້ອຍ ໆ ບ້ອນຢູ່ ເຂົາເພິ່ງຮູ້ແນວນີ້ວ່າ "ປາໂຕນີ້ມີກິຣິຍາບ້ອນເປັນແນວໃດ? ເຮັດໃຫ້ເກີດຄື້ນພຽງໃດ ແລະມີຄວາມໄວພຽງໃດ ປານີ້ໂຕນ້ອຍ ບໍ່ແມ່ນໂຕໃຫຍ່" ສັນນັ້ນ

ສ່ວນບຸກຄົນໃນໂລກນີ້ເມື່ອສົນທະນາກັນ ຈຶ່ງຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີການສະແຫວງຫາບັນຫາແນວໃດ ກຽມບັນຫາແນວໃດ ແລະຖາມບັນຫາແນວໃດ ທ່ານຜູ້ນີ້ມີປັນຍາດີ ບໍ່ແມ່ນມີປັນຍາຊາມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານຜູ້ນີ້ ອ້າງບົດທີ່ມີຄວາມໝາຍ ເລິກເຊິ່ງ ສະງົບ ປະນີດ ສາມັນຊົນຄາດບໍ່ເຖິງ ລະອຽດ ບັນດິດເພິ່ງຮູ້ໄດ້ ແລະທ່ານຜູ້ນີ້ ກ່າວທຳໃດ ກໍສາມາດທີ່ຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງເນື້ອຄວາມແຫ່ງທຳນັ້ນທັງໂດຍຫຍໍ້ຫຼືໂດຍພິດສະດານ ທ່ານຜູ້ນີ້ມີປັນຍາດີ ບໍ່ແມ່ນມີປັນຍາຊາມ"

ບຸກຄົນເມື່ອສົນທະນາກັນ ຈຶ່ງຮູ້ແນວນີ້ວ່າ "ທ່ານຜູ້ນີ້ສະແຫວງຫາບັນຫາແນວໃດ ຯລຯ ທ່ານຜູ້ນີ້ມີປັນຍາດີ ບໍ່ແມ່ນມີປັນຍາຊາມ" ປຽບຄືບຸຣຸດຜູ້ມີຕາດີຢືນຢູ່ແຄມຝັ່ງແມ່ນ້ຳ ເພິ່ງເຫັນປາໂຕໃຫຍ່ບ້ອນຢູ່ ເຂົາເພິ່ງຮູ້ແນວນີ້ວ່າ "ປາໂຕນີ້ມີກິຣິຍາບ້ອນເປັນແນວໃດ? ເຮັດໃຫ້ເກີດຄື້ນພຽງໃດ ແລະມີຄວາມໄວພຽງໃດ ປານີ້ໂຕໃຫຍ່ ບໍ່ແມ່ນ ໂຕນ້ອຍສັນນັ້ນ

ຂໍ້ທີ່ເຮົາກ່າວວ່າ "ປັນຍາເພິ່ງຮູ້ໄດ້ດ້ວຍການສົນທະນາ ແລະປັນຍານັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ແມ່ນເລັກໜ້ອຍ ຜູ້ມະນະສິການຈຶ່ງຮູ້ໄດ້ ຜູ້ບໍ່ມະນະສິການ ຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ມີປັນຍາຊາມຮູ້ບໍ່ໄດ້" ເຮົາກ່າວຍ້ອນອາໄສເຫດນີ້

ພິກຂຸທັງຫຼາຍ ຖານະ ໔ ປະການນີ້ແລອັນບຸກຄົນເພິ່ງຮູ້ໄດ້ດ້ວຍຖານະ ໔ ປະການນີ້"

**ຖານະສູດທີ ໘ ຈົບ**

## ໙. ພັດທິຍະສູດ[๑]

## ວ່າດ້ວຍເຈົ້າລິດສະຫວີພຣະນາມວ່າພັດທິຍະ

[໑໙໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນແລ ເຈົ້າລິດສະຫວີພຣະນາມວ່າພັດທິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກ

ເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກ ເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຮູ້ມາວ່າ "ພຣະສະມະນະໂຄດົມຊົງມີມາຍາ ຍ່ອມຮູ້ມາຍາທີ່ເປັນເຫດໃຫ້ສາວົກຂອງພວກອັນຍະເດຍຣະຖີກັບໃຈ" ສາວົກອັນຍະເດຍຣະຖີເຫຼົ່າ ນັ້ນ ພາກັນກ່າວແນວນີ້ວ່າ "ພຣະສະມະນະໂຄດົມຊົງມີມາຍາ ຊົງຮູ້ມາຍາທີ່ເປັນເຫດໃຫ້ສາວົກ ຂອງພວກອັນຍະເດຍຣະຖີກັບໃຈ" ຂ້າແດ່ ພຣະອົງຜູ້ຈະເລີນ ພວກເຂົາກ່າວຕາມທີ່ພຣະຜູ້ ມີພຣະພາກເຈົ້າ ຕັດໄວ້ ບໍ່ໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳບໍ່ເປັນຈິງແມ່ນບໍ? ຍ່ອມພະ ຍາກອນທຳສົມຄວນແກ່ທຳ ແລະການຄວນຕາມວາທະອັນຖືກຕ້ອງແກ່ເຫດໃດ ໆ ຍ່ອມບໍ່ມາ ເຖິງຖານະອັນຄວນຕິຕຽນບໍ? ແທ້ຈິງແລ້ວ ຂ້າພຣະອົງບໍ່ປະສົງຈະກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມາເທີ້ນ ພັດທິຍະ ທ່ານ

| | |
|---|---|
| ຢ່າປົງໃຈເຊື່ອດ້ວຍການ | ຟັງຕາມກັນມາ |
| ຢ່າປົງໃຈເຊື່ອດ້ວຍການ | ຖືສືບ ໆ ກັນມາ |
| ຢ່າປົງໃຈເຊື່ອດ້ວຍການ | ເລົ່າລື |
| ຢ່າປົງໃຈເຊື່ອດ້ວຍການ | ອ້າງຕຳລາຫຼືຄຳພີ |
| ຢ່າປົງໃຈເຊື່ອຍ້ອນ | ຕັກກະ |
| ຢ່າປົງໃຈເຊື່ອຍ້ອນການ | ອະນຸມານ |
| ຢ່າປົງໃຈເຊື່ອດ້ວຍການ | ຄິດຕອງຕາມແນວເຫດຜົນ |
| ຢ່າປົງໃຈເຊື່ອຍ້ອນ | ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ |
| ຢ່າປົງໃຈເຊື່ອຍ້ອນ | ແນມເຫັນຮູບລັກສະນະພໍຈະເປັນໄປໄດ້ |
| ຢ່າປົງໃຈເຊື່ອຍ້ອນ | ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ |

ພັດທິຍະ ເມື່ອໃດທ່ານເພິ່ງຮູ້ດ້ວຍຕົນເອງທໍ່ນັ້ນວ່າ "ທຳເຫຼົ່ານີ້ເປັນອະກຸສົນ ທຳ ເຫຼົ່ານີ້ມີ ໂທດ ທຳເຫຼົ່ານີ້ຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ" ເມື່ອນັ້ນທ່ານຄວນລະ(ທຳເຫຼົ່ານັ້ນ)ສາ

ພັດທິຍະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ໂລພະ (ຄວາມຢາກໄດ້) ເມື່ອເກີດຂຶ້ນ ພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

ພັທທິຍະລິດສະຫວີທູນວ່າ "ບໍ່ເກື້ອກູນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພັດທິຍະ ກໍບຸຣຸດບຸກຄົນຜູ້ມີໂລພະນີ້ຖືກໂລພະຄອບງໍາ ມີຈິດຖືກໂລພະກຸ້ມລຸມ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກ ຕະຫຼອດການລະນານແດ່ບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ພັດທິຍະ ທ່ານເຂົ້າໃຈເລື່ອງນັ້ນວ່າແນວໃດ ໂທສະ (ຄວາມຄິດປະທຸດສະຮ້າຍ) ฯລฯ ໂມຫະ (ຄວາມຫຼົງ) ฯລฯ[1] ສາຣໍາພະ (ການແຂ່ງດີ) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ບໍ່ເກື້ອກູນ ຂ້ານ້ອຍ"

"ພັດທິຍະ ກໍບຸຣຸດບຸກຄົນຜູ້ມີສາຣໍາພະນີ້ຖືກສາຣໍາພະຄອບງໍາ ມີຈິດຖືກສາຣໍາພະກຸ້ມລຸມ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນ ຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກຕະຫຼອດການລະນານແດ່ບໍ?"

"ເປັນແນວນັ້ນ ຂ້ານ້ອຍ"
"ພັດທິຍະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ທໍາເຫຼົ່ານີ້ເປັນກຸສົນຫຼືອະກຸສົນ"
"ເປັນອະກຸສົນ ຂ້ານ້ອຍ"
"ເປັນທໍາທີ່ມີໂທດຫຼືບໍ່ມີໂທດ"
"ເປັນທໍາທີ່ມີໂທດ ຂ້ານ້ອຍ"
"ເປັນທໍາທີ່ຜູ້ຮູ້ຕິຕຽນຫຼືຜູ້ຮູ້ສັນເສີນ"
"ເປັນທໍາທີ່ຜູ້ຮູ້ຕິຕຽນ ຂ້ານ້ອຍ"

"ທໍາເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກບໍ ຫຼືທ່ານມີຄວາມເຂົ້າໃຈໃນເລື້ອງນີ້ວ່າແນວໃດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ທໍາເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປ ເພື່ອບໍ່ເກື້ອກູນ ເພື່ອທຸກ ຂ້າພຣະອົງມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພັດທິຍະ ຍ້ອນເຫດນີ້ແລ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເທີ້ນ ພັດທິຍະ ທ່ານ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ

ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະພໍຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ ພັດທິຍະ ເມື່ອໃດທ່ານເພິ່ງຮູ້ດ້ວຍຕົນເອງທັ່ງນັ້ນວ່າ "ທຳເຫຼົ່ານີ້ເປັນອະກຸສົນ ທຳເຫຼົ່ານີ້ມີໂທດ ທຳເຫຼົ່ານີ້ຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ" ເມື່ອນັ້ນ ທ່ານຄວນລະ(ທຳເຫຼົ່ານັ້ນ)ສາ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ມາເທີ້ນ ພັດທິຍະ ທ່ານ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະພໍຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ພັດທິຍະ ເມື່ອໃດທ່ານເພິ່ງຮູ້ດ້ວຍຕົນເອງທັ່ງນັ້ນວ່າ "ທຳເຫຼົ່ານີ້ເປັນກຸສົນ ທຳເຫຼົ່ານີ້ບໍ່ມີໂທດ ທຳເຫຼົ່ານີ້ຜູ້ຮູ້ສັນເສີນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ" ເມື່ອນັ້ນທ່ານຄວນເຂົ້າເຖິງ(ທຳເຫຼົ່ານັ້ນ)ຢູ່ເທີ້ນ

ພັດທິຍະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອະໂລພະ (ຄວາມບໍ່ຢາກໄດ້) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ເພື່ອເກື້ອກູນ ຂ້ານ້ອຍ"

"ພັດທິຍະ ກໍບຸຣຸດບຸກຄົນຜູ້ບໍ່ມີໂລພະນີ້ ບໍ່ຖືກໂລພະຄອບງຳ ມີຈິດບໍ່ຖືກໂລພະກຸ້ມລຸມ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກ ຕະຫຼອດການລະນານແດ່ບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ພັດທິຍະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ) ฯລฯ ອະໂມຫະ (ຄວາມບໍ່ຫຼົງ) ฯລฯ໑ ອະສາຣຳພະ (ຄວາມບໍ່ແຂ່ງດີ) ເມື່ອເກີດຂື້ນພາຍໃນ ບຸກຄົນ ຍ່ອມເກີດຂື້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ເພື່ອເກື້ອກູນ ຂ້ານ້ອຍ"

"ພັດທິຍະ ກໍບຸຣຸດບຸກຄົນຜູ້ບໍ່ມີສາຣຳພະນີ້ບໍ່ຖືກສາຣຳພະຄອບງຳ ມີຈິດບໍ່ຖືກສາຣຳພະກຸ້ມລຸມ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກຕະຫຼອດການລະນານແດ່ບໍ?"

"ເປັນແນວນັ້ນ ຂ້ານ້ອຍ"
"ພັດທິຍະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ທຳເຫຼົ່ານີ້ເປັນກຸສົນຫຼືເປັນ ອະກຸສົນ"
"ເປັນກຸສົນ ຂ້ານ້ອຍ"
"ເປັນທຳທີ່ມີໂທດຫຼືບໍ່ມີໂທດ"
"ເປັນທຳທີ່ບໍ່ມີໂທດ ຂ້ານ້ອຍ"
"ເປັນທຳທີ່ຜູ້ຮູ້ຕິຕຽນຫຼືຜູ້ຮູ້ສັນເສີນ"
"ເປັນທຳທີ່ຜູ້ຮູ້ສັນເສີນ ຂ້ານ້ອຍ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກບໍ ຫຼື ທ່ານມີຄວາມເຂົ້າໃຈໃນເລື້ອງນີ້ວ່າແນວໃດ?"

"ຂ້າແດ່ ພຣະອົງຈະເລີນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ຂ້າພຣະອົງມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພັດທິຍະ ຍ້ອນເຫດນີ້ແລ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເທີ້ນ ພັດທິຍະ ທ່ານ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ

ຢ່າປົງໃຈເຊື່ອດ້ວຍການ  ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ  ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ  ຕັກກະ
ຢ່າປົງໃຈເຊື່ອຍ້ອນການ  ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ  ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ  ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ  ແນມເຫັນຮູບລັກສະນະພໍຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ  ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ ພັດທິຍະ ເມື່ອໃດທ່ານເພິ່ງຮູ້ດ້ວຍຕົນເອງທີ່ນັ້ນວ່າ "ທຳເຫຼົ່ານີ້ເປັນກຸສົນ ທຳເຫຼົ່ານີ້ບໍ່ມີໂທດ ທຳເຫຼົ່ານີ້ຜູ້ຮູ້ສັນເສີນ ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ" ເມື່ອນັ້ນທ່ານຄວນເຂົ້າເຖິງ(ທຳເຫຼົ່ານັ້ນ)ຢູ່ເທີ້ນ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພັດທິຍະ ຊົນເຫຼົ່າໃດໃນໂລກເປັນຄົນສະງົບ ເປັນສັດຕະບຸຣຸດ ຊົນເຫຼົ່ານັ້ນຍ່ອມຊັກຊວນສາວົກແນວນີ້ວ່າ ບຸຣຸດຜູ້ຈະເລີນ ທ່ານຈົ່ງມາ ຈົ່ງກຳຈັດໂລພະສາເທີ້ນ ເມື່ອກຳຈັດໂລພະໄດ້ ຈັກບໍ່ເຮັດກຳອັນເກີດແຕ່ໂລພະດ້ວຍກາຍ ວາຈາ ໃຈ ຈົ່ງກຳຈັດໂທສະສາເທີ້ນ ເມື່ອກຳຈັດ ໂທສະໄດ້ ຈັກບໍ່ເຮັດກຳອັນເກີດແຕ່ໂທສະດ້ວຍກາຍ ວາຈາ ໃຈ ຈົ່ງກຳຈັດໂມຫະສາເທີ້ນ ເມື່ອກຳຈັດໂມຫະໄດ້ ຈັກບໍ່ເຮັດກຳອັນເກີດແຕ່ໂມຫະດ້ວຍກາຍ ວາຈາ ໃຈ ຈົ່ງກຳຈັດຄວາມແຂ່ງດີສາເທີ້ນ ເມື່ອກຳຈັດຄວາມແຂ່ງດີໄດ້ ຈັກບໍ່ເຮັດກຳອັນເກີດແຕ່ຄວາມແຂ່ງດີດ້ວຍກາຍ ວາຈາ ໃຈ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພັດທິຍະລິດສະຫວີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນມ່ວນຫຼາຍ ໆລໆ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

"ພັດທິຍະ ເຮົາໄດ້ກ່າວຊັກຊວນທ່ານແນວນີ້ວ່າ "ຂໍທ່ານຈົ່ງມາເປັນສາວົກຂອງເຮົາເທີ້ນ ເຮົາຈັກເປັນສາດສະດາຂອງທ່ານບໍ?"

"ບໍ່ແມ່ນເຊັ່ນນັ້ນ ຂ້ານ້ອຍ"

"ພັດທິຍະ ສະມະນະພາມພວກໜຶ່ງກ່າວຕູ່ເຮົາຜູ້ມີວາທະແນວນີ້ ບອກແນວນີ້ ດ້ວຍຄຳເວົ້າອັນບໍ່ແນ່ນອນ ເປັນຄຳເປົ່າ ຄຳຕົວະ ຄຳບໍ່ຈິງວ່າ "ສະມະນະໂຄດົມມີມາຍາ ຮູ້ມາຍາທີ່ເປັນເຫດໃຫ້ສາວົກຂອງພວກອັນຍະເດຍຣະຖີມານັບຖື" ດັ່ງນີ້"

"ຂ້າແດ່ພຣະອົງຜູ້ຈະເລີນ ມາຍາທີ່ເປັນເຫດໃຫ້ກັບໃຈນີ້ດີຫຼາຍ ມາຍາທີ່ເປັນເຫດໃຫ້ກັບໃຈນີ້ງາມຫຼາຍ ຖ້າຍາດສາໂລຫິດອັນເປັນທີ່ຮັກຂອງຂ້າພຣະອົງຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ບັນດາຍາດພີ່ນ້ອງອັນເປັນທີ່ຮັກຂອງຂ້າພຣະອົງຕະຫຼອດການລະນານ ຖ້າແມ່ນກະສັດທັງປວງຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ ຂໍ້ນັ້ນຈະເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ກະສັດທັງປວງຕະຫຼອດການລະນານ ຖ້າແມ່ນພາມທັງປວງ ຯລຯ ແພດທັງປວງ ຯລຯ ສູດທັງປວງຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ ຂໍ້ນີ້ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ສູດທັງປວງຕະຫຼອດການລະນານ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພັດທິຍະ ຄຳທີ່ທ່ານກ່າວນີ້ເປັນແນວນັ້ນ ພັດທິຍະ ຄຳທີ່ທ່ານກ່າວນີ້ເປັນແນວນີ້ ຖ້າແມ່ນກະສັດທັງປວງຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດຂຶ້ນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ກະສັດຕະຫຼອດການລະນານ ຖ້າແມ່ນພາມທັງປວງ ຯລຯ ແພດທັງປວງ ຯລຯ ສູດທັງປວງຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດຂຶ້ນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ສູດທັງປວງຕະຫຼອດການລະນານ ຖ້າແມ່ນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດຂຶ້ນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຕະຫຼອດການລະນານ

ພັດທິຍະ ຖ້າແມ່ນພວກຜູ້ຮັ່ງມີເຫຼົ່ານີ້ຈະເພິ່ງກັບໃຈດ້ວຍມາຍາທີ່ເປັນເຫດໃຫ້ກັບໃຈນີ້ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດຂຶ້ນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ຜູ້ຮັ່ງມີເຫຼົ່ານີ້ຕະຫຼອດການລະນານ ຖ້າຜູ້ຮັ່ງມີເຫຼົ່ານີ້ຕັ້ງໃຈ ບໍ່ຈຳເປັນຕ້ອງເວົ້າເຖິງຜູ້ເປັນມະນຸດທຳມະດາ"

**ພັດທິຍະສູດທີ ໓ ຈົບ**

## ໔. ສາປຸຄິຍາສູດ

### ວ່າດ້ວຍໂກລິຍະບຸດຊາວສາປຸຄິຍະນິຄົມ

[໑໗໔] ສະໄໝໜຶ່ງ ທ່ານພຣະອານົນຢູ່ໃນນິຄົມຂອງໂກລິຍະຣາດຊະສະກຸນຊື່ສາປຸຄະແຄວັນ ໂກລິຍະ໑ ຄັ້ງນັ້ນແລ ໂກລິຍະບຸດຊາວສາປຸຄິຍະນິຄົມ໔ຈຳນວນຫຼາຍເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະອານົນໄດ້ກ່າວກັບໂກລິຍະບຸດ ຊາວສາປຸຄິຍະນິຄົມດັ່ງນີ້ວ່າ

"ທ່ານພະຍັກຄະປັດຊະ[1]ທັງຫຼາຍ ອິງຄວາມພຽນເພື່ອປາຣິສຸດທິ (ຄວາມບໍລິສຸດ) ໔ ປະການພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນຕັດໄວ້ຖືກຕ້ອງແລ້ວ ເພື່ອຄວາມມົດຈົດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ (ຄວາມໂສກເສົ້າແລະຄວາມຮ່ຳໄຮ) ເພື່ອດັບທຸກ (ຄວາມທຸກກາຍ) ແລະໂທມະນັດ (ຄວາມທຸກໃຈ) ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

ອິງຄວາມພຽນເພື່ອປາຣິສຸດທິ ໔ ປະການ ອັນໃດແດ່ ຄື

໑. ອິງຄວາມພຽນເພື່ອສີລະປາຣິສຸດທິ
໒. ອິງຄວາມພຽນເພື່ອຈິດຕະປາຣິສຸດທິ
໓. ອິງຄວາມພຽນເພື່ອທິດຖິປາຣິສຸດທິ
໔. ອິງຄວາມພຽນເພື່ອວິມຸດຕິປາຣິສຸດທິ

ອິງຄວາມພຽນເພື່ອສີລະປາຣິສຸດທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສີນ ໆລໆ[2] ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ຮຽກວ່າ ສີລະປາຣິສຸດທິ

ຄວາມພໍໃຈ[3] ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃນສີລະປາຣິສຸດທິນັ້ນວ່າ "ເຮົາຈັກຍັງສີລະປາຣິສຸດທິເຫັນປານນັ້ນ ທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ຫຼື ຈັກປະຄັບປະຄອງສີລະປາຣິສຸດທິທີ່ບໍລິບູນໄວ້ໃນຖານະນັ້ນ ໆ ດ້ວຍປັນຍາ" ທ່ານພະຍັກຄະປັດຊະທັງຫຼາຍ ນີ້ຮຽກວ່າ ອິງຄວາມພຽນເພື່ອສີລະປາຣິສຸດທິ

ອິງຄວາມພຽນເພື່ອຈິດຕະປາຣິສຸດທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ໆລໆ[4] ບັນລຸຈະຕຸດຖະຊານຢູ່ ນີ້ຮຽກວ່າ ຈິດຕະປາຣິສຸດທິ

ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃນຈິດຕະປາຣິສຸດທິນັ້ນວ່າ "ເຮົາຈັກພ່ຳເພັງຈິດຕະປາຣິສຸດທິເຫັນປານນັ້ນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ຫຼື ຈັກປະຄັບປະຄອງຈິດຕະປາຣິສຸດທິທີ່ບໍລິບູນໄວ້ໃນຖານະນັ້ນ ໆ ດ້ວຍປັນຍາ" ທ່ານພະຍັກຄະປັດຊະທັງຫຼາຍ ນີ້ຮຽກວ່າ ອິງຄວາມພຽນເພື່ອຈິດຕະປາຣິສຸດທິ

ອິງຄວາມພຽນເພື່ອທິດຖິປາຣິສຸດທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ນີ້ຮຽກວ່າ ທິດຖິປາຣິສຸດທິ

ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິສຳປະຊັນຍະໃນທິດຖິປາຣິສຸດທິນັ້ນວ່າ "ເຮົາຈັກພ່ຳເພັງທິດຖິປາຣິສຸດທິເຫັນປານນັ້ນທີ່ຍັງບໍ່ ບໍລິບູນໃຫ້ບໍລິບູນ ຫຼື ຈັກປະຄັບປະຄອງທິດຖິປາຣິສຸດທິທີ່ບໍລິບູນໄວ້ໃນຖານະນັ້ນ ໆ ດ້ວຍປັນຍາ" ທ່ານພະຍັກຄະປັດຊະທັງຫຼາຍ ນີ້ຮຽກວ່າ ອົງຄວາມພຽນເພື່ອທິດຖິປາຣິສຸດທິ

ອົງຄວາມພຽນເພື່ອວິມຸດຕິປາຣິສຸດທິ ເປັນແນວໃດ?

ຄື ອະຣິຍະສາວົກນີ້ແລເປັນຜູ້ປະກອບອົງຄວາມພຽນເພື່ອສີລະປາຣິສຸດທິ ປະກອບອົງຄວາມພຽນເພື່ອຈິດຕະປາຣິສຸດທິ ປະກອບອົງຄວາມພຽນເພື່ອທິດຖິປາຣິສຸດທິແລ້ວ ຍ່ອມຄາຍຈິດໃນທຳທີ່ເປັນເຫດແຫ່ງຄວາມກຳໜັດ[១] ຍ່ອມປົດຈິດໃນທຳເປັນບ່ອນຕັ້ງແຫ່ງຄວາມປົດແລ້ວ ຍ່ອມຖືກຕ້ອງສຳມາວິມຸດຕິ[២] ນີ້ຮຽກວ່າ ວິມຸດຕິປາຣິສຸດທິ

ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃນວິມຸດຕິປາຣິສຸດທິນັ້ນວ່າ "ເຮົາຈັກພ່ຳເພັງວິມຸດຕິປາຣິສຸດທິເຫັນປານນັ້ນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນຫຼືຈັກປະຄັບປະຄອງວິມຸດຕິປາຣິສຸດທິທີ່ບໍລິບູນ ໄວ້ໃນຖານະນັ້ນ ໆ ດ້ວຍປັນຍາ" ທ່ານພະຍັກຄະປັດຊະທັງຫຼາຍ ນີ້ຮຽກວ່າ ອົງຄວາມພຽນເພື່ອວິມຸດຕິປາຣິສຸດທິ

ທ່ານພະຍັກຄະປັດຊະທັງຫຼາຍ ອົງຄວາມພຽນເພື່ອປາຣິສຸດທິ ໔ ປະການນີ້ແລ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ"

**ສາປຸຄິຍາສູດທີ ໔ ຈົບ**

## ໕. ວັບປະສູດ

### ວ່າດ້ວຍເຈົ້າສາກະຍະພຣະນາມວ່າວັບປະ

[໑໙໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດນະຄອນກະບິນລະພັດ ແຄວັນສັກກະ ຄັ້ງນັ້ນແລ ເຈົ້າວັບປະສາກະຍະ[១]ສາວົກນິຄົນສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບເຈົ້າວັບປະສາກະຍະ ສາວົກນິຄົນດັ່ງນີ້ ວ່າ

“ເຈົ້າວັບປະ ບຸກຄົນໃນໂລກນີ້ເພິ່ງເປັນຜູ້ສັງລວມດ້ວຍກາຍ ວາຈາ ໃຈ ຍ້ອນອະວິດຊາຄາຍໄປ ວິດຊາເກີດຂຶ້ນ ທ່ານເຫັນຖານະອັນເປັນເຫດໃຫ້ອາສະວະທີ່ເປັນປັດໄຈແຫ່ງທຸກຂະເວທະນາເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບບໍ?”

ເຈົ້າວັບປະຕັດວ່າ “ຂ້າແດ່ ທ່ານຜູ້ຈະເລີນ ຂ້າພະເຈົ້າເຫັນຖານະນັ້ນ ຄື ບຸກຄົນໃນໂລກນີ້ເພິ່ງເຮັດບາບກຳໄວ້ໃນປາງກ່ອນທີ່ຍັງໃຫ້ຜົນບໍ່ໝົດ ອາສະວະທັງຫຼາຍທີ່ເປັນປັດໄຈແຫ່ງທຸກຂະເວທະນາເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບທີ່ມີບາບກຳນັ້ນເປັນເຫດ” ທ່ານພຣະມະຫາໂມກຄັນລານະກັບເຈົ້າວັບປະສາກະຍະ ສາວົກນິຄົນສົນທະນາເລື້ອງຄ້າງໄວ້ທໍ່ນີ້

ເມື່ອໃນເວລາຄໍ່າ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປສູ່ຫໍສັນປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມທ່ານພຣະມະຫາໂມກຄັນລານະ ວ່າ

“ໂມກຄັນລານະ ບັດນີ້ ພວກທ່ານນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດ ແລະເລື້ອງອັນໃດທີ່ພວກທ່ານສົນທະນາກັນຄ້າງໄວ້”

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງໄດ້ກ່າວກັບເຈົ້າວັບປະສາກະຍະ ສາວົກນິຄົນວ່າ “ວັບປະ ບຸກຄົນໃນໂລກນີ້ເພິ່ງເປັນຜູ້ສັງລວມດ້ວຍກາຍ ວາຈາ ໃຈ ຍ້ອນອະວິດຊາຄາຍໄປ ວິດຊາເກີດຂຶ້ນ ທ່ານເຫັນຖານະອັນເປັນເຫດໃຫ້ອາສະວະທີ່ເປັນປັດໄຈແຫ່ງທຸກຂະເວທະນາເຊິ່ງຈະເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບນັ້ນບໍ” ເມື່ອຂ້າພຣະອົງກ່າວແນວນີ້ ເຈົ້າວັບປະສາກະຍະ ສາວົກນິຄົນ ໄດ້ກ່າວກັບຂ້າພຣະອົງວ່າ “ທ່ານຜູ້ຈະເລີນ ຂ້າພະເຈົ້າເຫັນຖານະນັ້ນ ຄື ຖ້າບຸກຄົນເຮັດບາບກຳໄວ້ໃນປາງກ່ອນທີ່ຍັງໃຫ້ຜົນບໍ່ໝົດ ອາສະວະທັງຫຼາຍທີ່ເປັນປັດໄຈແຫ່ງເວທະນາ ຈະເພິ່ງໄປຕາມບຸກຄົນຜູ້ມີບາບກຳນັ້ນເປັນເຫດໃນສຳປະຣາຍະພົບ” ເລື້ອງນີ້ແລທີ່ຂ້າພຣະອົງກັບເຈົ້າວັບປະສາກະຍະ ສາວົກນິຄົນສົນທະນາຄ້າງໄວ້ ກໍພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ”

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຈົ້າວັບປະສາກະຍະ ສາວົກນິຄົນດັ່ງນີ້ວ່າ “ວັບປະ ຖ້າທ່ານຈະເພິ່ງຍອມຮັບຂໍ້ທີ່ຄວນຍອມຮັບແລະຄັດຄ້ານຂໍ້ທີ່ຄວນຄັດຄ້ານຕໍ່ເຮົາ ແລະທ່ານບໍ່ຮູ້ຄວາມໝາຍແຫ່ງພາສິດຂອງເຮົາຂໍ້ໃດ ທ່ານເພິ່ງຊັກຖາມເຮົາໃນຂໍ້ນັ້ນຍິ່ງຂຶ້ນໄປວ່າ “ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?” ເຮົາເພິ່ງສົນທະນາກັນໃນເລື້ອງນີ້ໄດ້”

ເຈົ້າວັບປະສາກະຍະຂາບທູນວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຍອມຮັບຂໍ້ທີ່ຄວນຍອມຮັບແລະຈັກຄັດຄ້ານຂໍ້ທີ່ຄວນຄັດຄ້ານຕໍ່ພຣະຜູ້ມີພຣະພາກເຈົ້າ ອັນໜຶ່ງ ຂ້າພຣະອົງບໍ່ຮູ້ຄວາມ ໝາຍແຫ່ງພາສິດຂອງພຣະຜູ້ມີພຣະພາກເຈົ້າຂໍ້ໃດ ຂ້າພຣະອົງຈັກຊັກຖາມພຣະຜູ້

ມີພຣະພາກເຈົ້າໃນຂໍ້ນັ້ນຍິ່ງຂຶ້ນໄປວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ຂໍເຮົາຈົ່ງສົນທະນາກັນໃນເລື່ອງນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວັບປະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອາສະວະ ເຫຼົ່າໃດທີ່ກໍ່ທຸກ ເດືອດຮ້ອນ[໑] ເກີດຂຶ້ນຍ້ອນການກະທຳທາງກາຍເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການກະທຳທາງກາຍແລ້ວ ອາສະວະເຫຼົ່ານັ້ນທີ່ກໍ່ທຸກ ເດືອດຮ້ອນ ຍ່ອມບໍ່ມີແກ່ເຂົາ ເຂົາບໍ່ເຮັດກຳໃໝ່ດ້ວຍ ຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປນຳ ນີ້ຄືຂໍ້ປະຕິບັດທີ່ເຮັດໃຫ້ກິເລດໝົດສິ້ນໄປ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ທ່ານຍ່ອມເຫັນຖານະ ທີ່ເປັນເຫດໃຫ້ອາສະວະທີ່ເປັນປັດໄຈແຫ່ງທຸກຂະເວທະນາເຊິ່ງຈະເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບນັ້ນບໍ?"

ເຈົ້າວັບປະສາກະຍະຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວັບປະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອາສະວະເຫຼົ່າໃດທີ່ກໍ່ທຸກ ເດືອດຮ້ອນ ເກີດຂຶ້ນຍ້ອນການກະທຳທາງວາຈາເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການກະທຳທາງວາຈາແລ້ວ ອາສະວະເຫຼົ່ານັ້ນທີ່ກໍ່ທຸກ ເດືອດຮ້ອນ ຍ່ອມບໍ່ມີແກ່ເຂົາ ເຂົາບໍ່ເຮັດກຳໃໝ່ນຳ ຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປນຳ ນີ້ຄືຂໍ້ປະຕິບັດທີ່ເຮັດໃຫ້ກິເລດໝົດສິ້ນໄປ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ທ່ານຍ່ອມເຫັນຖານະ ອັນເປັນເຫດໃຫ້ອາສະວະທີ່ເປັນປັດໄຈແຫ່ງທຸກຂະເວທະນາເຊິ່ງຈະເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບນັ້ນ ບໍ?"

ເຈົ້າວັບປະສາກະຍະຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວັບປະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອາສະວະ ເຫຼົ່າໃດທີ່ກໍ່ທຸກ ເດືອດຮ້ອນ ເກີດຂຶ້ນຍ້ອນການກະທຳທາງໃຈເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການກະທຳທາງໃຈແລ້ວ ອາສະວະເຫຼົ່ານັ້ນທີ່ກໍ່ທຸກ ເດືອດຮ້ອນ ຍ່ອມບໍ່ມີ ແກ່ເຂົາ ເຂົາບໍ່ເຮັດກຳໃໝ່ນຳ ຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປນຳ ນີ້ຄືຂໍ້ປະຕິບັດທີ່ເຮັດໃຫ້ກິເລດໝົດສິ້ນໄປ ฯລฯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ທ່ານຍ່ອມເຫັນຖານະອັນເປັນເຫດໃຫ້ອາສະວະອັນເປັນປັດໄຈແຫ່ງທຸກຂະເວທະນາເຊິ່ງຈະເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບນັ້ນບໍ?"

ເຈົ້າວັບປະສາກະຍະຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວັບປະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ອາສະວະ ເຫຼົ່າໃດທີ່ກໍ່ທຸກ ເດືອດຮ້ອນ ເກີດຂຶ້ນຍ້ອນອະວິດຊາເປັນປັດໄຈ ຍ້ອນອະວິດຊາຄາຍໄປ ວິດຊາເກີດຂຶ້ນ ອາສະວະເຫຼົ່ານັ້ນທີ່ກໍ່ທຸກ ເດືອດຮ້ອນຍ່ອມບໍ່ມີແກ່ເຂົາ ເຂົາບໍ່ເຮັດກຳໃໝ່ນຳ ຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປນຳ ນີ້ຄືຂໍ້ປະຕິບັດທີ່ເຮັດໃຫ້ກິເລດໝົດສິ້ນໄປ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ທ່ານຍ່ອມເຫັນຖານະອັນເປັນເຫດໃຫ້ອາສະວະທີ່ເປັນປັດໄຈແຫ່ງທຸກຂະເວທະນາເພິ່ງໄປຕາມບຸກຄົນໃນສຳປະຣາຍະພົບນັ້ນບໍ?"

ເຈົ້າວັບປະສາກະຍະຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວັບປະ ພິກຂຸມີຈິດລຸດພົ້ນໂດຍຖືກຕ້ອງແນວນີ້ແລ້ວ ຍ່ອມບັນລຸທຳເປັນເຄື່ອງຢູ່ປະຈຳ ໖ ປະການ ທ່ານເຫັນຮູບທາງຕາແລ້ວບໍ່ດີໃຈ[໑] ບໍ່ເສຍໃຈ[໒] ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ທ່ານເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ[໓] ຍ່ອມຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ" ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຍ່ອມຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ" ຍ່ອມຮູ້ແຈ້ງວ່າ "ຫຼັງຈາກຕາຍແລ້ວ ເວທະນາທັງປວງທີ່ບໍ່ໜ້າເພີດເພີນບໍ່ໜ້າຍິນດີໃນໂລກນີ້ຈັກສະງົບເຢັນລົງ"

ວັບປະ ເງົາຜາກົດຍ້ອນອາໄສຕົ້ນໄມ້ ຄັ້ງນັ້ນ ບຸຣຸດຖືຈົກແລະກະຕ່າມາ ເຂົາຕັດຕົ້ນໄມ້ນັ້ນທີ່ກົກ ແລ້ວຂຸດຄຸ້ຍເອົາຮາກຂຶ້ນ ຕັດບໍ່ໃຫ້ເຫຼືອແມ່ນຂະໜາດທໍ່ຕົ້ນແຝກ ເຂົາຕັດຕົ້ນໄມ້ນັ້ນເປັນທ່ອນໆ ເຮັດໃຫ້ເປັນປ່ຽງ ໆ ແລ້ວຕາກລົມແລະແດດ ເມື່ອຕາກລົມແລະແດດແຫ້ງແລ້ວ ເຜົາເຮັດໃຫ້ເປັນຂີ້ເຖົ່າ ໂຣຍໃນບ່ອນມີລົມພັດແຮງຫຼືລອຍໃນແມ່ນ້ຳອັນມີແປວໄຫຼແຮງ ເມື່ອເປັນແນວນັ້ນ ເງົາທີ່ຜາກົດຍ້ອນອາໄສຕົ້ນໄມ້ທີ່ຖືກຕັດຮາກກົ່ນເຫງົ້າຄືຕົ້ນຕານ ທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ແມ່ນສັນໃດ

ພິກຂຸກໍຄືກັນສັນນັ້ນ ມີຈິດລຸດພົ້ນໂດຍຖືກຕ້ອງແນວນີ້ແລ້ວ ຍ່ອມໄດ້ບັນລຸທຳ ເປັນເຄື່ອງຢູ່ປະຈຳ ໖ ປະການ ທ່ານເຫັນຮູບທາງຕາແລ້ວບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ທ່ານເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ຍ່ອມຮູ້ແຈ້ງ ວ່າ

"ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ" ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຍ່ອມຮູ້ແຈ້ງວ່າ "ເຮົາ ສະເຫວີຍເວທະນາມີຊີວິດເປັນບ່ອນສຸດ" ຍ່ອມຮູ້ແຈ້ງວ່າ "ຫຼັງຈາກຕາຍແລ້ວ ເວທະນາທັງປວງທີ່ບໍ່ໜ້າເພີດເພີນບໍ່ໜ້າຍິນດີໃນໂລກນີ້ຈັກສະງົບເຢັນລົງ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເຈົ້າວັບປະສາກະຍະ ສາວົກນິຄົນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸຣຸດຕ້ອງການກຳໄລ ລ້ຽງລູກມ້າໄວ້ຂາຍ ແຕ່ບໍ່ໄດ້ກຳໄລ ຊ້ຳຍັງຕ້ອງອິດເມື່ອຍ ລຳບາກໃຈຍິ່ງຂຶ້ນໄປ ແມ່ນສັນໃດ

ຂ້າພຣະອົງກໍຄືກັນສັນນັ້ນ ຕ້ອງການກຳໄລ ເຂົ້າຄົບຫານິຄົນຜູ້ໂງ່ກໍບໍ່ໄດ້ກຳໄລ ທັງອິດເມື່ອຍ ລຳບາກໃຈຍິ່ງຂຶ້ນໄປ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂ້າພຣະອົງນີ້ຈັກໂຮຍຄວາມເຫຼື້ອມໃສໃນພວກນິຄົນຜູ້ໂງ່ສາໃນບ່ອນລົມພັດແຮງຫຼືລອຍໃນແມ່ນ້ຳອັນມີແປວນ້ຳໄຫຼແຮງ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວໍ້າ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ວັບປະສູດທີ ໘ ຈົບ**

## ໙. ສາລະຫະສູດ

## ວ່າດ້ວຍເຈົ້າລິດສະຫວີພຣະນາມວ່າສາລະຫະ

[໑໙໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາປ່າມະຫາວັນເຂດນະຄອນ ເວສາລີ ຄັ້ງນັ້ນແລ ເຈົ້າລິດສະຫວີພຣະນາມວ່າສາລະຫະແລະພຣະນາມວ່າອະໄພສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ເຈົ້າສາລະຫະລິດສະຫວີໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີສະມະນະພາມພວກໜຶ່ງບັນຍັດການຂ້າມໂອຄະ[໑]ຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນສີລະວິສຸດທິ (ຄວາມມົດຈົດແຫ່ງສີນ) ເປັນເຫດ (໒) ຍ້ອນການ ກຽດຊັງຕະບະ[໒] ເປັນເຫດ ສ່ວນໃນທຳວິໄນນີ້ພຣະຜູ້ມີພຣະພາກເຈົ້າຕັດແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາລະຫະ ເຮົາກ່າວສີລະວິສຸດທິແລວ່າ "ເປັນອົງແຫ່ງສະມະນະທຳແນວໜຶ່ງ" ສະມະນະພາມເຫຼົ່າໃດຖືການກຽດຊັງຕະບະເປັນອາຫະ[໓] ຖືການກຽດຊັງຕະບະເປັນສາຣະ ຍຶດໝັ້ນການກຽດຊັງຕະບະຢູ່ ສະມະນະພາມເຫຼົ່ານັ້ນບໍ່ສາມາດຂ້າມໂອຄະໄດ້ ອັນໜຶ່ງ ສະມະນະພາມເຫຼົ່າໃດມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ມີຄວາມປະພຶດທາງໃຈບໍ່ບໍລິສຸດ ມີອາຊີບບໍ່ບໍລິສຸດ ສະມະນະພາມເຫຼົ່ານັ້ນບໍ່ຄວນເພື່ອຍານທັດສະນະ[໔] ເພື່ອຄວາມຕັດສະຮູ້ຊັ້ນເລີດ[໕]

ປຽບຄືບຸຣຸດຕ້ອງການຈະຂ້າມແມ່ນ້ຳ ເພິ່ງຖືຜຶ່ງອັນຄົມເຂົ້າໄປສູ່ປ່າ ເຂົາພົບຕົ້ນຮັງໃຫຍ່ໃນປ່ານັ້ນລຳຕົ້ນຊື່ ຍັງເປັນໄມ້ອ່ອນ[໖] ບໍ່ມີບ່ອນຕຳໜິ ເຂົາເພິ່ງຕັດທີ່ກົກ ຕັດທີ່ປາຍ ແລ້ວແລ້ວລິດງ່າແລະໃບຮຽບຮ້ອຍດີ ຖາກດ້ວຍຕາກ ເຫຼົາດ້ວຍມີດ ຊຸດເປັນຮ່ອງ ຂັດດ້ວຍລູກຫີນແລ້ວປ່ອຍລົງແມ່ນ້ຳ

ສາລະຫະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ບຸຣຸດນັ້ນຈະຂ້າມແມ່ນ້ຳນັ້ນໄປໄດ້ບໍ?"

ເຈົ້າສາລະຫະລິດສະຫວິຂາບທູນວ່າ "ຂໍ້ນັ້ນ ເປັນໄປບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຂໍ້ນັ້ນ ຍ້ອນເຫດໃດ"

ເຈົ້າສາລະຫະລິດສະຫວິຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນຕົ້ນຮັງນັ້ນເຂົາແຕ່ງກຽງມີ່ນພາຍນອກ ແຕ່ພາຍໃນບໍ່ຮຽບຮ້ອຍ ບຸຣຸດນັ້ນເພິ່ງຫວັງຂໍ້ນີ້ໄດ້ວ່າ ໄມ້ຮັງຈະຕ້ອງຈົມແລະບຸຣຸດນັ້ນຈັກເຖິງຄວາມພິນາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາລະຫະ ຂໍ້ນີ້ສັນໃດ ສະມະນະພາມເຫຼົ່າໃດຖືການກຽດຊັງຕະບະເປັນອາຫະ ຖືການກຽດຊັງຕະບະເປັນສາຣະ ຍຶດໝັ້ນການກຽດຊັງຕະບະຢູ່ ສະມະນະພາມເຫຼົ່ານັ້ນບໍ່ສາມາດຂ້າມໂອຄະໄດ້ ອັນໜຶ່ງ ສະມະນະພາມເຫຼົ່າໃດມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ມີຄວາມປະພຶດທາງໃຈບໍ່ບໍລິສຸດ ມີອາຊີບບໍ່ບໍລິສຸດ ສະມະນະພາມເຫຼົ່ານັ້ນບໍ່ຄວນເພື່ອຍານທັດສະນະ ເພື່ອຄວາມຕັດສະຮູ້ຊັ້ນເລີດ ຄືກັນສັນນັ້ນ

ສ່ວນພາມເຫຼົ່າໃດບໍ່ຖືການກຽດຊັງຕະບະເປັນອາຫະ ບໍ່ຖືການກຽດຊັງຕະບະເປັນສາຣະ ບໍ່ຍຶດໝັ້ນການກຽດຊັງຕະບະຢູ່ ສະມະນະພາມເຫຼົ່ານັ້ນສາມາດຂ້າມໂອຄະໄດ້ ອັນໜຶ່ງ ສະມະນະພາມເຫຼົ່າໃດມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ມີຄວາມປະພຶດທາງໃຈບໍລິສຸດ ມີອາຊີບບໍລິສຸດ ສະມະນະພາມເຫຼົ່ານັ້ນຄວນເພື່ອຍານທັດສະນະ ເພື່ອຄວາມຕັດສະຮູ້ຊັ້ນເລີດ

ປຽບຄືບຸຣຸດຕ້ອງການຈະຂ້າມແມ່ນ້ຳ ເພິ່ງຖືຜຶ່ງອັນຄົມເຂົ້າໄປສູ່ປ່າ ເຂົາພົບຕົ້ນຮັງໃຫຍ່ໃນປ່ານັ້ນ ລຳຕົ້ນຊື່ ຍັງເປັນໄມ້ອ່ອນ ບໍ່ມີບ່ອນຕຳໜິ ເຂົາເພິ່ງຕັດທີ່ເຫງົ້າ ຕັດທີ່ປາຍ ແລ້ວ

ແລ້ວລິດງ່າແລະໃບຮຽບຮ້ອຍດີ ຖາກດ້ວຍພື້ງ ເຫຼົາດ້ວຍມີດ ຂີດແຕ່ງດ້ວຍສິ່ວ ເຮັດພາຍໃນໃຫ້ຮຽບຮ້ອຍ ຂຸດເປັນຮ່ອງ ຂັດດ້ວຍລູກຫີນ ເຮັດໃຫ້ເປັນເຮືອ ຕິດກັນຊຽງແລະຫາງເສືອແລ້ວປ່ອຍລົງແມ່ນ້ຳ

ສາລະທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຄື ບຸຣຸດນັ້ນຈະຂ້າມແມ່ນ້ຳໄດ້ບໍ?"

ເຈົ້າສາລະທະລິດສະຫວິຂາບທູນວ່າ "ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນັ້ນ ຍ້ອນເຫດໃດ"

ເຈົ້າສາລະທະລິດສະຫວິຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຍ້ອນຕົ້ນຮັງນັ້ນເຂົາແຕ່ງກ້ຽງມີ່ນດີພາຍນອກ ແລະພາຍໃນກໍຮຽບຮ້ອຍດີ ເຮັດເປັນເຮືອ ຕິດກັນຊຽງແລະ ຫາງເສືອບຸຣຸດນັ້ນເພິ່ງຫວັງຂໍ້ນີ້ໄດ້ວ່າ ເຮືອຈັກບໍ່ຈົມ ບຸຣຸດນັ້ນ ຈັກເຖິງຝັ່ງໄດ້ໂດຍຄວາມປອດໄພ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາລະທະ ຂໍ້ນີ້ສັນໃດ ສະມະນະພາມເຫຼົ່າໃດບໍ່ຖືການກຽດຊັງຕະບະເປັນອາທະ ບໍ່ຖືການກຽດຊັງຕະບະເປັນສາຣະ ບໍ່ຍຶດໝັ້ນການກຽດຊັງຕະບະຢູ່ສະມະນະພາມເຫຼົ່ານັ້ນສາມາດຂ້າມໂອຄະໄດ້ ອັນໜຶ່ງ ສະມະນະພາມເຫຼົ່າໃດມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ມີຄວາມປະພຶດທາງໃຈບໍລິສຸດ ມີອາຊີບບໍລິສຸດ ສະມະນະພາມເຫຼົ່ານັ້ນຄວນເພື່ອຍານທັດສະນະ ເພື່ອຄວາມຕັດສະຣູ້ຊັ້ນເລີດ ຄືກັນສັນນັ້ນແລ

ສາລະທະ ປຽບຄືນັກຮົບອາຊີບເຖິງແມ່ນຈະຣູ້ກະບວນລູກສອນຫຼວງຫຼາຍ ແຕ່ເຂົາຈະຊື່ວ່າເປັນນັກຮົບ ຄູ່ຄວນແກ່ພຣະຣາຊາ ເໝາະແກ່ພຣະຣາຊາ ເຖິງການນັບວ່າເປັນຣາດຊະອົງຄະຮັກໂດຍແທ້ດ້ວຍອົງ ໓ ປະການ

ອົງ ໓ ປະການ ອັນໃດແດ່ ຄື

໑. ຍິງລູກສອນໄດ້ໄກ
໔. ຍິງບໍ່ພາດ
໓. ທຳລາຍກາຍຂະໜາດໃຫຍ່ໄດ້

ສາລະທະ ນັກຮົບອາຊີບຍິງລູກສອນໄດ້ໄກແມ່ນສັນໃດ ອະຣິຍະສາວົກຜູ້ມີສຳມາສະມາທິກໍສັນນັ້ນ ອະຣິຍະສາວົກຜູ້ມີສຳມາສະມາທິພິຈາລະນາເຫັນຮູບແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ພິຈາລະນາເຫັນເວທະນາແນວໃດແນວໜຶ່ງ ໗ລ໗ ສັນຍາ

ແນວໃດແນວໜຶ່ງ ฯລฯ ສັງຂານແນວໃດແນວໜຶ່ງ ฯລฯ ພິຈາລະນາເຫັນວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

ສາລະທະ ນັກຮົບອາຊີບຍິງບໍ່ພາດສັນໃດ ອະຣິຍະສາວົກຜູ້ມີສຳມາທິດຖິກໍສັນນັ້ນ

ອະຣິຍະສາວົກຜູ້ມີສຳມາທິດຖິຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ"

ສາລະທະ ນັກຮົບອາຊີບທຳລາຍກາຍຂະໜາດໃຫຍ່ໄດ້ສັນໃດ ອະຣິຍະສາວົກຜູ້ມີສຳມາວິມຸດຕິກໍສັນນັ້ນ ອະຣິຍະສາວົກຜູ້ມີສຳມາວິມຸດຕິທຳລາຍກອງອະວິດຊາໃຫຍ່ໄດ້"

**ສາລະທະສູດທີ ໖ ຈົບ**

## ໗. ມັນລິກາເທວີສູດ

## ວ່າດ້ວຍພຣະນາງມັນລິກາເທວີ

[໑໙໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະປິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພຣະນາງມັນລິກາເທວີສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງແລະເປັນຄົນຍາກຈົນ ຂັດສົນຊັບ[๑] ຂັດສົນໂພຄະ[๒] ຕ່ຳສັກ[๓]

ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ ແຕ່ເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ

ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ[๔] ແຕ່ເປັນຄົນຍາກຈົນ ຂັດສົນຊັບ ຂັດສົນໂພຄະ ຕ່ຳສັກ

ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ແລະເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມັນລິກາ ມາຕຸຄາມລາງຄົນໃນໂລກນີ້ເປັນຜູ້ໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນເລັກໜ້ອຍກໍຂັດເຄືອງ ສຸນສຽວ ກະຟິດກະຟັດ ກະດ້າງກະເດື່ອງ ສະແດງອາການໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈ ເຂົາບໍ່ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ແລະມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ກິດກັນ ຕັດຮອນ ຜູກມັດຄວາມຣິດສະຫຍາ ຖ້າມາຕຸຄາມນັ້ນຈຸຕິຈາກອັດຕະພາບນັ້ນມາສູ່ຄວາມເປັນແນວນີ້ ກັບມາເກີດໃນຊາດໃດໆ ຍ່ອມເປັນຜູ້ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ ແລະເປັນຄົນຍາກຈົນ ຂັດສົນຊັບ ຂັດສົນໂພຄະ ຕ່ຳສັກ

ມາຕຸຄາມລາງຄົນໃນໂລກນີ້ ເປັນຜູ້ໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນເລັກໜ້ອຍກໍຂັດເຄືອງ ສຸນສຽວ ກະຟິດກະຟັດ ກະດ້າງກະເດື່ອງ ສະແດງອາການໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈ ແຕ່ເຂົາໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ແລະບໍ່ມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ບໍ່ກິດກັນ ບໍ່ຕັດຮອນ ບໍ່ຜູກມັດຄວາມຣິດສະຫຍາ ຖ້າທ່ານຈຸຕິຈາກອັດຕະພາບນັ້ນມາສູ່ຄວາມເປັນແນວນີ້ ກັບມາເກີດໃນຊາດໃດໆ ຍ່ອມເປັນຜູ້ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ ແຕ່ເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ

ມາຕຸຄາມລາງຄົນໃນໂລກນີ້ ເປັນຜູ້ບໍ່ໂກດ ບໍ່ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນຫຼາຍກໍບໍ່ຂັດເຄືອງໃຈ ບໍ່ໂກດງ່າຍ ບໍ່ກະຟິດກະຟັດ ບໍ່ກະດ້າງກະເດື່ອງ ບໍ່ສະແດງອາການໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈ ແຕ່ເຂົາບໍ່ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ແລະມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ກິດກັນ ຕັດຮອນ ຜູກມັດຄວາມຣິດສະຫຍາ ຖ້າທ່ານຈຸຕິຈາກອັດຕະພາບນັ້ນແລ້ວມາສູ່ຄວາມເປັນແນວນີ້ ກັບມາເກີດໃນຊາດໃດ ໆ ຍ່ອມເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ແຕ່ເປັນຄົນຍາກຈົນ ຂັດສົນຊັບ ຂັດສົນໂພຄະ ຕ່ຳສັກ

ມາຕຸຄາມລາງຄົນໃນໂລກນີ້ ເປັນຜູ້ບໍ່ໂກດ ບໍ່ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນຫຼາຍກໍບໍ່ຂັດເຄືອງ ບໍ່ໂກດງ່າຍ ບໍ່ກະຟິດກະຟັດ ບໍ່ກະດ້າງກະເດື່ອງ ບໍ່ສະແດງອາການໂກດຄວາມຂັດເຄືອງແລະຄວາມບໍ່ພໍໃຈ ເຂົາໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ແລະບໍ່ມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ບໍ່ກິດກັນ ບໍ່ຕັດຮອນ ບໍ່ຜູກມັດຄວາມຣິດສະຫຍາ ຖ້າເຂົາຈຸຕິຈາກອັດຕະພາບ

ນັ້ນແລ້ວມາສູ່ຄວາມເປັນແບບນີ້ ກັບມາເກີດໃນຊາດໃດ ໆ ຍ່ອມເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ແລະເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ

ມັນລິກາ ນີ້ແລເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ ແລະເປັນຄົນຍາກຈົນ ຂັດສົນຊັບ ຂັດສົນໂພຄະ ຕ່ຳສັກ

ນີ້ແລ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ ແຕ່ເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ

ນີ້ແລ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ແຕ່ເປັນຄົນຍາກຈົນ ຂັດສົນຊັບ ຂັດສົນໂພຄະ ຕ່ຳສັກ

ນີ້ແລ ເປັນເຫດເປັນປັດໄຈໃຫ້ມາຕຸຄາມລາງຄົນໃນໂລກນີ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ແລະເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ສູງສັກ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ແລ້ວ ພຣະນາງມັນລິກາເທວີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນຊາດອື່ນ ຂ້ານ້ອຍຄົງຈະເປັນຄົນໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວເລັກໜ້ອຍກໍຂັດເຄືອງ ສຸນສຽວ ກະພືດກະພັດ ກະດ້າງກະເດື່ອງ ສະແດງອາການໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈ ໃນຊາດນີ້ ຂ້ານ້ອຍຈຶ່ງມີຜິວພັນບໍ່ງາມ ຮູບບໍ່ງາມ ບໍ່ໜ້າເບິ່ງ

ແຕ່ໃນຊາດອື່ນຂ້ານ້ອຍຄົງໄດ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະເຄື່ອງໄຕ້ແກ່ສະມະນະພຼາມ ໃນຊາດນີ້ຂ້ານ້ອຍຈຶ່ງເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ

ໃນຊາດອື່ນຂ້ານ້ອຍຄົງຈະບໍ່ມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ບໍ່ກີດກັນ ບໍ່ຕັດຮອນ ບໍ່ຜູກມັດຄວາມຣິດສະຫຍາ ໃນຊາດນີ້ ຂ້ານ້ອຍຈຶ່ງເປັນຜູ້ສູງສັກ ຂ້າແດ່ພຣະອົງຜູ້ຈະເລີນ ກໍນາງກະສັດແດ່ ນາງພາມມະນີແດ່ ນາງຄະຫະປະຕານີແດ່ ມີຢູ່ໃນຣາດຊະສະກຸນນີ້ ຂ້ານ້ອຍໄດ້ດຳລົງຄວາມເປັນໃຫຍ່ເໜືອຍິງເຫຼົ່ານັ້ນຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂ້ານ້ອຍຈັກບໍ່ໂກດ ບໍ່ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ເຖິງຈະຖືກວ່າກ່າວຫຼາຍກໍຈັກບໍ່ຂັດເຄືອງ ບໍ່ໂກດງ່າຍ ບໍ່ກະພືດກະພັດ ບໍ່ກະດ້າງກະເດື່ອງ ບໍ່ສະແດງອາການໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈ ແລະຈັກໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍວດຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນຢູ່ອາໄສ ແລະ ເຄື່ອງໄຕ້ແກ່ສະມະ

ນະຫຼີພານ ຈັກບໍ່ມີໃຈຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການໄຫວ້ ແລະການບູຊາຂອງຜູ້ອື່ນ ຈັກບໍ່ກີດກັນ ບໍ່ຕັດຮອນ ບໍ່ຣິດສະຫຍາ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນ ມ່ວນຫຼາຍ ฯລฯ[១] ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້ານ້ອຍວ່າເປັນອຸປາສິກາຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

**ມັນລິກາເທວີສູດທີ ๗ ຈົບ**

## ໘. ອັດຕັນຕະປະສູດ

## ວ່າດ້ວຍບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ

[໑໙໘] ພິກຂຸທັງຫຼາຍ ບຸກຄົນ ໔ ປະເພດນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ປະເພດ໌ໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ
໒. ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໓. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດ ຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໔. ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ

ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ຄົນເປືອຍລາງຄົນໃນໂລກນີ້ຂາດມາຣະຍາດ ເລຍມື ເຂົາເຊີນໃຫ້ມາຮັບພິກສາກໍບໍ່ມາ ເຂົາເຊີນໃຫ້ຢຸດກໍບໍ່ຢຸດ ບໍ່ຮັບພິກສາທີ່ເຂົາແບ່ງໄວ້ກ່ອນ ບໍ່ຮັບພິກສາທີ່ເຂົາເຈາະຈົງເຮັດໄວ້ ບໍ່ຍິນດີກິດນິມົນ ບໍ່ຮັບພິກສາປາກໝໍ້ ບໍ່ຮັບພິກສາຈາກກະເຊົ້າ ບໍ່ຮັບພິກສາກວມທໍຣະນີປະຕູ ບໍ່ຮັບພິກສາກວມທ່ອນໄມ້ບໍ່ຮັບພິກສາກວມສາກ ບໍ່ຮັບພິກສາທີ່ຄົນສອງຄົນບໍຣິໂພກຢູ່ ບໍ່ຮັບພິກສາຂອງຍິງຖືພາ ບໍ່ຮັບພິກສາຂອງຍິງທີ່ກໍາລັງໃຫ້ລູກດູດນົມ ບໍ່ຮັບພິກສາຂອງຍິງທີ່ກ້ຽວພາຄົນ ບໍ່ຮັບພິກສາທີ່ນັດແນະກັນເຮັດໄວ້ ບໍ່ຮັບພິກສາໃນບ່ອນທີ່ຮັບລ້ຽງດູລູກໝາ ບໍ່ຮັບພິກສາໃນບ່ອນທີ່ແມງວັນໄຕ່ຕອມເປັນກຸ່ມ ບໍ່ຮັບປາ ບໍ່ຮັບຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມນໍ້າໝັກດອງ ເຂົາຮັບພິກສາສະເພາະທີ່ເຮືອນຫຼັງດຽວ ບໍາລຸງອັດຕະພາບດ້ວຍເຂົ້າຄໍາດຽວ ຮັບພິກສາທີ່ເຮືອນ ໒ ຫຼັງ ບໍາລຸງອັດຕະພາບດ້ວຍເຂົ້າ ໒ ຄໍາ ຯລຯ ຫຼືຮັບພິກສາທີ່ເຮືອນ ໗ ຫຼັງ ບໍາລຸງອັດຕະພາບດ້ວຍເຂົ້າ ໗ ຄໍາ ບໍາລຸງອັດຕະພາບດ້ວຍພິກສາໃນຖາດນ້ອຍໃບດຽວແດ່ ບໍາລຸງອັດຕະພາບດ້ວຍພິກສາ ໃນຖາດນ້ອຍ ໒ ໃບແດ່ ຯລຯ ບໍາລຸງອັດຕະພາບດ້ວຍພິກສາໃນຖາດນ້ອຍ ໗ ໃບແດ່ ກິນອາຫານທີ່ເກັບຄ້າງໄວ້ມື້ດຽວແດ່ ກິນອາຫານທີ່ເກັບຄ້າງໄວ້ ໒ ມື້ແດ່ ຯລຯ ກິນອາຫານທີ່ເກັບຄ້າງໄວ້ ໗ ມື້ແດ່ ເຂົາໝັ່ນປະກອບໃນການບໍຣິໂພກທີ່ວຽນມາຕັ້ງເຄິ່ງເດືອນ ແນວນີ້ຢູ່

ຄົນເປືອຍນັ້ນກິນສົ້ມຜັກເປັນອາຫານແດ່ ກິນເຂົ້າຟ່າງເປັນອາຫານແດ່ ກິນໝາກເດືອຍເປັນອາຫານແດ່ ກິນກາກເຂົ້າເປັນອາຫານແດ່ ກິນຢາງ੶ເປັນອາຫານແດ່ ກິນຮໍາເປັນອາຫານແດ່ ກິນເຂົ້າກົ້ນໝໍ້ເປັນອາຫານແດ່ ກິນກໍາຍານເປັນອາຫານແດ່ ກິນຫຍ້າເປັນອາຫານແດ່ ກິນມູນງົວເປັນອາຫານແດ່ ກິນເຫງົ້າ ແລະໝາກໄມ້ໃນປ່າເປັນອາຫານແດ່ ກິນໝາກໄມ້ທີ່ຫຼົ່ນບໍາລຸງອັດຕະພາບ ເຂົານຸ່ງຫົ່ມຜ້າປ່ານແດ່ ນຸ່ງຫົ່ມຜ້າແກມກັນແດ່ ນຸ່ງຫົ່ມຜ້າຫໍ່ສົບແດ່ ນຸ່ງຫົ່ມຜ້າບັງສຸກຸນແດ່ ນຸ່ງຫົ່ມຜ້າເປືອກໄມ້ແດ່ ນຸ່ງຫົ່ມໜັງເສືອແດ່ ນຸ່ງຫົ່ມໜັງເສືອທີ່ມີເລັບຕິດຢູ່ແດ່ ນຸ່ງຫົ່ມຄາກອງແດ່ ນຸ່ງຫົ່ມຜ້າເປືອກປໍກອງແດ່ ນຸ່ງຫົ່ມຜ້າໝາກໄມ້ກອງແດ່ ນຸ່ງຫົ່ມຜ້າກໍາພົນເຮັດດ້ວຍຜົມຄົນແດ່ ນຸ່ງຫົ່ມຜ້າກໍາພົນເຮັດດ້ວຍຂົນສັດຮ້າຍແດ່ ນຸ່ງຫົ່ມຜ້າເຮັດດ້ວຍຂົນປີກນົກເຄົ້າແດ່ ລົກຜົມແລະໜວດ ໝັ່ນປະກອບການລົກຜົມແລະ ໜວດແດ່ ຢືນແນວດຽວປະຕິເສດການນັ່ງແດ່ ນັ່ງຍ່ອງຍໍ້ປະກອບຄວາມພຽນດ້ວຍການນັ່ງຍ່ອງຍໍ້ແດ່ ນອນເທິງໜາມ ສໍາເລັດການນອນເທິງໜາມແດ່ ອາບນໍ້າມື້ລະ ໓ ເທື່ອ ໝັ່ນປະກອບການລົງນໍ້າແດ່ ເຂົາໝັ່ນປະກອບການເຮັດຮ່າງກາຍໃຫ້ເດືອດຮ້ອນຫຼາຍວິທີດັ່ງກ່າວມານີ້ຢູ່ ພິກຂຸທັງຫຼາຍ ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ເປັນແນວນີ້ແລ

ບຸກຄົນເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າແບ້ ຂ້າໝູ ເປັນນາຍພານນົກ ເປັນນາຍພານເນື້ອ ເປັນຊາວປະມົງ ເປັນໂຈນ ເປັນເພດຊະຄາດ ເປັນຄົນຂ້າງົວ ເປັນຜູ້ຄຸມ ຫຼືເປັນຜູ້ເຮັດກໍາອັນ

ຫຍາບຊ້າຊະນິດໃດຊະນິດໜຶ່ງກໍຕາມ ພິກຂຸທັງຫຼາຍ ບຸກຄົນເປັນຜູ້ເຮັດ ຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວນີ້ແລ

ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນພຣະຣາຊາມະຫາກະສັດໄດ້ຮັບມຸດທາພິເສກ ຫຼືວ່າເປັນພາມມະນະມະຫາສານ ເຂົາໃຫ້ສ້າງສັນຖາຄານໃໝ່ທາງທິດຕາເວັນອອກແຫ່ງພຣະນະຄອນ ແລ້ວແຖຜົມແລະໜວດ ນຸ່ງໜັງສັດມີເລັບ ຊະໂລມກາຍດ້ວຍເນີຍແລະນໍ້າມັນ ເກົາຫຼັງດ້ວຍເຂົາສັດ ເຂົ້າໄປສູ່ສັນຖາຄານໃໝ່ພ້ອມດ້ວຍມະເຫສີແລະພາມຜູ້ເປັນປຸໂຣຫິດ ເຂົາສຳເລັດການນອນເທິງພື້ນອັນປາສະຈາກການປູລາດໄວ້ດ້ວຍມູນງົວສົດ ພຣະຣາຊາໃຫ້ພະຊົນຊີບເປັນໄປນຳນໍ້ານົມທີ່ມີຢູ່ໃນເຕົ້າທີ ໑ ຂອງແມ່ງົວໂຕໜຶ່ງທີ່ມີລູກອ່ອນ ພຣະມະເຫສີໃຫ້ພະຊົນຊີບເປັນໄປນຳນົມທີ່ມີຢູ່ໃນເຕົ້າທີ ໔ ພາມຜູ້ເປັນ ປຸໂຣຫິດໃຫ້ອັດຕະພາບເປັນໄປດ້ວຍນໍ້ານົມທີ່ມີຢູ່ໃນເຕົ້າທີ ໓ ພຣະຣາຊາຊົງບູຊາໄຟດ້ວຍນໍ້ານົມທີ່ມີຢູ່ໃນເຕົ້າທີ ໔ ງົວນ້ອຍໃຫ້ອັດຕະພາບເປັນໄປນຳນໍ້ານົມທີ່ເຫຼືອ ພຣະຣາຊານັ້ນຕັດແນວນີ້ວ່າ “ທ່ານທັງຫຼາຍ ຈົ່ງຂ້າງົວທໍ່ນີ້ ຈົ່ງຂ້າງົວເຖິກນ້ອຍທໍ່ນີ້ ຈົ່ງຂ້າງົວແມ່ນ້ອຍທໍ່ນີ້ ຈົ່ງຂ້າແບ້ທໍ່ນີ້ ຈົ່ງຂ້າແກະທໍ່ນີ້ເພື່ອບູຊາຍັນ (ຈົ່ງຂ້າມ້າທໍ່ນີ້ເພື່ອບູຊາຍັນ) ຈົ່ງຕັດຕົ້ນໄມ້ທໍ່ນີ້ເພື່ອເຮັດເສົາ ຈົ່ງກ່ຽວຫຍ້າຄາທໍ່ນີ້ເພື່ອບັງແລະລາດ” ແມ່ນເຫຼົ່າຊົນທັງທີ່ເປັນຂ້າທາດ ເປັນຄົນຮັບໃຊ້ ເປັນຄົນງານຂອງພຣະຣາຊານັ້ນກໍຍ່ອມສະດຸ້ງຕໍ່ອາດຍາ ສະດຸ້ງຕໍ່ໄພ ມີໜ້ານອງດ້ວຍນໍ້າຕາຮ້ອງໄຫ້ທຳການງານຢູ່ ພິກຂຸທັງຫຼາຍ ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນ ໃຫ້ເດືອດຮ້ອນ ເປັນແນວນີ້ແລ

ບຸກຄົນເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນນັ້ນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ສະເຫວີຍສຸກ ມີຕົນອັນປະເສີດຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ຕະຖາຄົດສະເດັດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍ ຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດດ້ວຍຕົນເອງ

ແລ້ວ ປະກາດໃຫ້ຜູ້ອື່ນຮູ້ນຳ ສະແດງທຳມີຄວາມງາມໃນເບື້ອງຕົ້ນ[໑] ມີຄວາມງາມໃນທ່າມກາງ[໒] ແລະມີຄວາມງາມໃນບ່ອນສຸດ[໓] ປະກາດພົມມະຈັນ[໔] ພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ

ຄະຫະບໍດີຫຼືບຸດຄະຫະບໍດີຜູ້ເກີດພາຍຫຼັງໃນຕະກູນໃດຕະກູນໜຶ່ງຟັງທຳນັ້ນແລ້ວ ໄດ້ສັດທາໃນຕະຖາຄົດ ໄດ້ສັດທາແລ້ວພິຈາລະນາເຫັນວ່າ "ຄະຮາວາດ(ການຢູ່ຄອງເຮືອນ) ຄັບແຄບ[໑] ເປັນທາງມາແຫ່ງທຸລີ[໒] ບັນພະຊາປອດໂປ່ງ[໓] ການທີ່ບຸກຄົນຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນຄືຫອຍສັງທີ່ຂັດແລ້ວນີ້ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນຈະແຖຜົມແລະໜວດຄອງຜ້າກາສາຍະອອກຈາກເຮືອນບວດເປັນບັນພະຊິດ"

ສະໄໝຕໍ່ມາ ເຂົາໄດ້ລະກອງໂພຄະຊັບນ້ອຍໃຫຍ່ແລະເຄືອຍາດນ້ອຍໃຫຍ່ແລ້ວ ແຖຜົມແລະໜວດ ຄອງຜ້າກາສາຍະອອກຈາກເຮືອນບວດເປັນບັນພະຊິດເມື່ອບວດແລ້ວແນວນີ້ ເປັນຜູ້ເຖິງພ້ອມດ້ວຍສິກຂາແລະສາຊີບ[໔]ສະເໝີກັບພິກຂຸທັງຫຼາຍ

ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

ເປັນຜູ້ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ[໔] ເວັ້ນຫ່າງໄກອະສັດທຳອັນເປັນກິດຂອງຊາວບ້ານ

ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳເວົ້າເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວ ບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວ ບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

ເປັນຜູ້ລະເວັ້ນຂາດຈາກຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄໍາຈິງ ເວົ້າອີງປະໂຫຍດ ເວົ້າອີງທໍາ ເວົ້າອີງວິໄນ ເວົ້າຄໍາທີ່ມີຫຼັກຖານ ມີທີ່ອ້າງອີງ ມີບ່ອນກໍານົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

ພິກຂຸນັ້ນເປັນຜູ້ເວັ້ນຂາດຈາກການພາກພິຊະຄາມ ແລະພູຕະຄາມ ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ[໗] ເວັ້ນຂາດຈາກການຟ້ອນລໍາ ຂັບຮ້ອງ ເສບດົນຕີ ແລະເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ ເວັ້ນຂາດຈາກການທັດຊົງ ປະດັບຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງໂຕ ເວັ້ນຂາດຈາກບ່ອນນອນສູງໃຫຍ່ ເວັ້ນຂາດຈາກການຮັບຄໍາແລະເງິນ ເວັ້ນຂາດຈາກ ການຮັບທັນຍາຫານດິບ[໘] ເວັ້ນຂາດຈາກການຮັບຊີ້ນດິບ ເວັ້ນຂາດຈາກການຮັບສະຕີແລະກຸມາຣີ ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ ເວັ້ນຂາດຈາກການຮັບແບ້ແລະແກະ ເວັ້ນຂາດຈາກການຮັບໄກ່ແລະໝູ ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະລາ ເວັ້ນຂາດຈາກການຮັບຮົ້ວສວນໄຮ່ນາແລະທີ່ດິນ ເວັ້ນຂາດຈາກການຮັບເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ ເວັ້ນຂາດຈາກການຊື້ຂາຍ ເວັ້ນຂາດຈາກການໂກງດ້ວຍຕາຊົງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະການຫຼອກລວງ ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊິງ ການປຸ້ນ ແລະການຂົ່ມຂູ່ເອົາຊັບ

ພິກຂຸນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍ ແລະບິນທະບາດພໍອີ່ມທ້ອງ ຈະໄປບ່ອນໃດ ໆ ກໍໄປໄດ້ທັນທີ ຄືນົກບິນໄປບ່ອນໃດ ໆ ກໍມີແຕ່ປີກເປັນພາຣະ ທ່ານປະກອບດ້ວຍອະຣິຍະສີນຂັນແບວນີ້ແລ້ວ ຍ່ອມສະເຫວີຍສຸກອັນບໍ່ມີໂທດໃນພາຍໃນ

ພິກຂຸນັ້ນ ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທໍາຄືອະພິດຊາແລະ ໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທໍາມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທໍາຄືອະພິດຊາແລະໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ທ່ານຜູ້ປະກອບດ້ວຍອະຣິຍະອິນຊີສັງວອນແບວນີ້ ຈຶ່ງຊື່ວ່າ ສະເຫວີຍສຸກອັນບໍ່ຜະສົມດ້ວຍກິເລດໃນພາຍໃນ

ພິກຂຸນັ້ນ ເປັນຜູ້ທໍາຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນ ການສັນ ການດື່ມ

ການຫຍໍ້າ ການຊີມ ການຖ່າຍອຸດຈາຣະປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການມິດ

ພິກຂຸນັ້ນ ປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນ ແລະອະຣິຍະສະຕິສໍາປະຊັນຍະ ພັກຢູ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຮ່ອມພູ ຖໍ້າ ປ່າຊ້າ ກາງແຈ້ງ ກອງເຟືອງ ທ່ານກັບຈາກບິນທະບາດ ພາຍຫຼັງສັນອາຫານສໍາເລັດແລ້ວກໍນັ່ງຄູ້ບັນລັງ ຕັ້ງກາຍກົງ ດໍາລົງສະຕິໄວ້ສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງຍາກໄດ້ຂອງເຂົາ) ໃນໂລກແລ້ວ ມີໃຈປາສະຈາກອະພິດຊາຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ (ຄວາມຄິດຮ້າຍ) ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ(ຄວາມທໍ້ຖອຍແລະງ່ວງເຫງົາ) ປາສະຈາກຖີນະມິດທະ ກໍານົດແສງສະຫວ່າງ ມີສະຕິສໍາປະຊັນຍະຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບ ຢູ່ພາຍໃນ ຊໍາຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທໍາທັງຫຼາຍຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກວິຈິກິດສາ ທ່ານເມື່ອລະນິວອນເຫຼົ່ານີ້ທີ່ເປັນເຄື່ອງເສົ້າໝອງໃຈ ເປັນເຄື່ອງທອນກໍາລັງປັນຍາແລ້ວ ສະຫງັດຈາກກາມ ໆລໆ ບັນລຸຈະຕຸດຖະຊານຢູ່

ເມື່ອຈິດເປັນສະມາທິ ບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແບບນີ້

ເມື່ອຈິດເປັນສະມາທິ ບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າ ແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ

ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ແນວນີ້ແລ

ເມື່ອຈິດເປັນສະມາທິ ບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມີນີປະຕິປະທາ"

ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນ[๑]ແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ພິກຂຸທັງຫຼາຍ ບຸກຄົນເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວນີ້ແລ ແລະບຸກຄົນນັ້ນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວດັບຮ້ອນ ເຢັນໃຈ ສະເຫວີຍສຸກ ມີຕົນອັນປະເສີດຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ"

**ອັດຕັນຕະປະສູດທີ ໗ ຈົບ**

## ໘. ຕັນຫາສູດ

## ວ່າດ້ວຍຕັນຫາ

[໑໙໙] ພິກຂຸທັງຫຼາຍ ເຮົາຈັກສະແດງຕັນຫາເຊັ່ນດັ່ງຕາໜ່າງ ທ່ອງທ່ຽວໄປ ແຜ່ໄປຊ່ານໄປ ເກາະກ່ຽວຢູ່ໃນອາລົມຕ່າງໆ ເປັນເຄື່ອງປົກຄຸມຫຸ້ມຫໍ່ໂລກນີ້ ເຊິ່ງຫຍຸ້ງຄືປຸ້ມຝ້າຍອັນຫຍຸ້ງ ຂອດເປັນປົມຄືຫຍ້າມຸ້ງກະຕ່າຍແລະຫຍ້າປ້ອງ ບໍ່ໃຫ້ລ່ວງພົ້ນອະບາຍ[๒] ທຸກຄະຕິ ວິນິບາດ ແລະສັງສາຣະວັດໄປໄດ້ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນທູນຮັບພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ຕັນຫາເຊັ່ນດັ່ງຕາໜ່າງ ທ່ອງທ່ຽວໄປ ແຜ່ໄປ ຊ່ານໄປ ເກາະກ່ຽວ ຢູ່ໃນອາລົມຕ່າງໆ ເປັນເຄື່ອງປົກຄຸມຫຸ້ມຫໍ່ໂລກນີ້ ເຊິ່ງຫຍຸ້ງຄືປຸ້ມຝ້າຍອັນຫຍຸ້ງ ຂອດເປັນປົມຄືຫຍ້າມຸ້ງກະຕ່າຍແລະຫຍ້າປ້ອງ ບໍ່ໃຫ້ລ່ວງພົ້ນອະບາຍ ທຸກຄະຕິ ວິນິບາດ ແລະສັງສາຣະວັດໄປໄດ້ນັ້ນເປັນແນວໃດ?

ຄື ຕັນຫາວິຈະຣິດ ໑໘ ປະການນີ້ອາໄສຂັນທະປັນຈະກະພາຍໃນ

ຕັນຫາວິຈະຣິດ ໑໘ ປະການນີ້ອາໄສຂັນທະປັນຈະກະພາຍນອກ
ຕັນຫາວິຈະຣິດ ໑໘ ປະການອາໄສຂັນທະປັນຈະກະພາຍໃນ ອັນໃດແດ່ ຄື

໑. ເມື່ອມີຕັນຫາວ່າ "ເຮົາເປັນ"
໒ .ຕັນຫາວ່າ "ເຮົາເປັນແນວນີ້" ຈຶ່ງມີ
໓. ຕັນຫາວ່າ "ເຮົາເປັນແນວນັ້ນ" ຈຶ່ງມີ
໔. ຕັນຫາວ່າ "ເຮົາເປັນໂດຍປະການອື່ນ" ຈຶ່ງມີ
໕. ຕັນຫາວ່າ "ເຮົາເປັນຜູ້ທ່ຽງ" ຈຶ່ງມີ
໖. ຕັນຫາວ່າ "ເຮົາເປັນຜູ້ບໍ່ທ່ຽງ" ຈຶ່ງມີ
໗. ຕັນຫາວ່າ "ເຮົາເພິ່ງເປັນ" ຈຶ່ງມີ
໘. ຕັນຫາວ່າ "ເຮົາເພິ່ງເປັນແນວນີ້" ຈຶ່ງມີ
໙. ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນ" ຈຶ່ງມີ
໑໐. ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນ" ຈຶ່ງມີ
໑໑. ຕັນຫາວ່າ "ເຮົາເພິ່ງເປັນແດ່" ຈຶ່ງມີ
໑໒. ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ແດ່" ຈຶ່ງມີ
໑໓. ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນແດ່" ຈຶ່ງມີ
໑໔. ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນແດ່" ຈຶ່ງມີ
໑໕. ຕັນຫາວ່າ "ເຮົາຈັກເປັນ" ຈຶ່ງມີ
໑໖. ຕັນຫາວ່າ "ເຮົາຈັກເປັນແນວນີ້" ຈຶ່ງມີ
໑໗. ຕັນຫາວ່າ "ເຮົາຈັກເປັນແນວນັ້ນ" ຈຶ່ງມີ
໑໘. ຕັນຫາວ່າ "ເຮົາຈັກເປັນໂດຍປະການອື່ນ" ຈຶ່ງມີ

ນີ້ຄືຕັນຫາວິຈະຣິດ ໑໘ ປະການອາໄສຂັນທະປັນຈະກະພາຍໃນ
ຕັນຫາວິຈະຣິດ ໑໘ ປະການອາໄສຂັນທະປັນຈະກະພາຍນອກ ອັນໃດແດ່ ຄື

໑. ເມື່ອມີຕັນຫາວ່າ "ເຮົາເປັນດ້ວຍຂັນທະປັນຈະກະນີ້"
໒. ຕັນຫາວ່າ "ເຮົາເປັນແນວນີ້ດ້ວຍຂັນທະປັນຈະກະນີ້" ຈຶ່ງມີ

໓. ຕັນຫາວ່າ "ເຮົາເປັນແນວນັ້ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໔. ຕັນຫາວ່າ "ເຮົາເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໕. ຕັນຫາວ່າ "ເຮົາເປັນຜູ້ທ່ຽງດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໖. ຕັນຫາວ່າ "ເຮົາເປັນຜູ້ບໍ່ທ່ຽງດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໗. ຕັນຫາວ່າ "ເຮົາເພິ່ງເປັນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໘. ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໙. ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໑໐. ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໑໑. ຕັນຫາວ່າ "ເຮົາເພິ່ງເປັນດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ
໑໒. ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ
໑໓. ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ
໑໔. ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ
໑໕. ຕັນຫາວ່າ "ເຮົາຈັກເປັນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໑໖. ຕັນຫາວ່າ "ເຮົາຈັກເປັນແນວນີ້ດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໑໗. ຕັນຫາວ່າ "ເຮົາຈັກເປັນແນວນັ້ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ
໑໘. ຕັນຫາວ່າ "ເຮົາຈັກເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ

ນີ້ຄືຕັນຫາວິຈະຣິດ ໑໘ ປະການອາໄສຂັນທະປັນຈະກະພາຍນອກ

ຕັນຫາວິຈະຣິດ ໑໘ ປະການອາໄສຂັນທະປັນຈະກະພາຍໃນ ຕັນຫາວິຈະຣິດ ໑໘ ປະການ ອາໄສຂັນທະປັນຈະກະພາຍນອກ ດ້ວຍປະການດັ່ງນີ້ ລວມຮຽກວ່າ ຕັນຫາວິຈະຣິດ ໓໖ ປະການ ຕັນຫາວິຈະຣິດປານນີ້ ທີ່ເປັນອະດີດ ໓໖ ປະການ ອະນາຄົດ ໓໖ ປະການ ປັດຈຸບັນ ໓໖ ປະການ ລວມເປັນຕັນຫາວິຈະຣິດ໑ ໑໐໘ ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຕັນຫານີ້ນັ້ນແລ ເຊັ່ນດັ່ງຕາໜ່າງ ທ່ອງທ່ຽວໄປ ແຜ່ໄປ ຊ່ານໄປ ເກາະກ່ຽວຢູ່ໃນອາລົມຕ່າງໆ ເປັນເຄື່ອງປົກຄຸມຫຸ້ມຫໍ່ໂລກນີ້ ເຊິ່ງຫຍຸ້ງຄືປຸ້ມຝ້າຍ ອັນຫຍຸ້ງ ຂອດເປັນປົມຄືຫຍ້າມຸ້ງກະຕ່າຍແລະຫຍ້າປ້ອງ ບໍ່ໃຫ້ລ່ວງພົ້ນອະບາຍ ທຸກຄະຕິ ວິນິບາດ ແລະສັງສາຣະວັດໄປໄດ້"

**ຕັນຫາສູດທີ ໙ ຈົບ**

# ໑໐. ເປມະສູດ

## ວ່າດ້ວຍຄວາມຮັກແລະຄວາມຊັງ

[໔໐໐] ພິກຂຸທັງຫຼາຍ ທຳ ໔ ປະການນີ້ຍ່ອມເກີດ

ທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມຮັກເກີດຍ້ອນຄວາມຮັກ
໒. ຄວາມຊັງເກີດຍ້ອນຄວາມຮັກ
໓. ຄວາມຮັກເກີດຍ້ອນຄວາມຊັງ
໔. ຄວາມຊັງເກີດຍ້ອນຄວາມຊັງ

ຄວາມຮັກເກີດຍ້ອນຄວາມຮັກ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ເປັນຜູ້ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຂອງບຸກຄົນ ຄົນອື່ນໆ ປະພຶດຕໍ່ບຸກຄົນທີ່ຮັກນັ້ນດ້ວຍອາການທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ບຸກຄົນນັ້ນມີຄວາມຄິດແນວນີ້ວ່າ "ຄົນອື່ນ ໆ ປະພຶດຕໍ່ບຸກຄົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຂອງເຮົາດ້ວຍອາການທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ" ເຂົາຈຶ່ງເກີດຄວາມຮັກໃນຄົນເຫຼົ່ານັ້ນ ຄວາມຮັກເກີດຍ້ອນຄວາມຮັກ ເປັນແນວນີ້ແລ

ຄວາມຊັງເກີດຍ້ອນຄວາມຮັກ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ເປັນຜູ້ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຂອງບຸກຄົນ ຄົນອື່ນ ໆ ປະພຶດຕໍ່ບຸກຄົນທີ່ຮັກນັ້ນດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບຸກຄົນນັ້ນມີຄວາມຄິດແນວນີ້ວ່າ "ຄົນອື່ນ ໆ ປະພຶດຕໍ່ບຸກຄົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຂອງເຮົາດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ" ເຂົາຈຶ່ງເກີດຄວາມຊັງໃນຄົນເຫຼົ່ານັ້ນ ຄວາມຊັງເກີດຍ້ອນຄວາມຮັກ ເປັນແນວນີ້ແລ

ຄວາມຮັກເກີດຍ້ອນຄວາມຊັງ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ເປັນຜູ້ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈຂອງບຸກຄົນ ຄົນອື່ນໆ ກໍປະພຶດຕໍ່ບຸກຄົນທີ່ຊັງນັ້ນດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບຸກຄົນນັ້ນມີຄວາມຄິດແນວນີ້ວ່າ "ຄົນອື່ນ ໆ ປະພຶດຕໍ່ບຸກຄົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈຂອງເຮົາດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ" ເຂົາຈຶ່ງເກີດຄວາມຮັກໃນຄົນເຫຼົ່ານັ້ນ ຄວາມຮັກເກີດຍ້ອນຄວາມຊັງ ເປັນແນວນີ້ແລ

ຄວາມຊັງເກີດຍ້ອນຄວາມຊັງ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ເປັນຜູ້ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈຂອງບຸກຄົນ ຄົນອື່ນ ໆ ກໍປະພຶດຕໍ່ຄົນທີ່ຊັງນັ້ນດ້ວຍອາການທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ບຸກຄົນນັ້ນມີຄວາມຄິດແນວນີ້ວ່າ "ຄົນອື່ນໆ ປະພຶດຕໍ່ຄົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈຂອງເຮົາດ້ວຍອາການທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ" ເຂົາຈຶ່ງເກີດຄວາມຊັງໃນບຸກຄົນເຫຼົ່ານັ້ນ ຄວາມຊັງເກີດຍ້ອນຄວາມຊັງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ທຳ ๔ ປະການນີ້ແລຍ່ອມເກີດ

ສະໄໝໃດ ພິກຂຸສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ฯລฯ ຢູ່ ສະໄໝນັ້ນ ແມ່ນຄວາມຮັກທີ່ເກີດຍ້ອນຄວາມຮັກ ຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຊັງທີ່ເກີດຍ້ອນຄວາມຮັກຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຮັກທີ່ເກີດຍ້ອນຄວາມຊັງຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຊັງທີ່ເກີດຍ້ອນຄວາມຊັງຍ່ອມບໍ່ມີແກ່ພິກຂຸນັ້ນ

ສະໄໝໃດ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ฯລฯ ຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານ ฯລฯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະ ຕຸດຖະຊານ ฯລฯ ຢູ່ ສະໄໝນັ້ນ ແມ່ນຄວາມຮັກທີ່ເກີດຍ້ອນຄວາມຮັກ ຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຊັງທີ່ເກີດຍ້ອນຄວາມຮັກຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຮັກທີ່ເກີດຍ້ອນຄວາມຊັງຍ່ອມບໍ່ມີແກ່ພິກຂຸນັ້ນ ແມ່ນຄວາມຊັງທີ່ເກີດຍ້ອນຄວາມຊັງ ຍ່ອມບໍ່ມີແກ່ພິກຂຸນັ້ນ

ສະໄໝໃດ ພິກຂຸເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ສະໄໝນັ້ນ ແມ່ນຄວາມຮັກທີ່ເກີດຍ້ອນຄວາມຮັກເປັນອັນພິກຂຸນັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄວາມຊັງທີ່ເກີດຍ້ອນຄວາມຮັກເປັນອັນພິກຂຸນັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄວາມຮັກທີ່ເກີດຍ້ອນຄວາມຊັງເປັນອັນພິກຂຸນັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ແມ່ນຄວາມຊັງທີ່ເກີດຍ້ອນຄວາມຊັງເປັນອັນພິກຂຸນັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸນີ້ເຮົາຮຽກວ່າ ບໍ່ຍຶດຖື[១] ບໍ່ໂຕ້ຕອບ[២] ບໍ່ບັງຫວນຄວັນ[៣] ບໍ່ລຸກຮຸ່ງ[៤] ບໍ່ຖືກໄຟໄໝ້[៥]

ພິກຂຸຊື່ວ່າຍຶດຖື ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນຮູບ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີເວທະນາ ພິຈາລະນາເຫັນເວທະນາ ໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນເວທະນາ ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັນຍາ ພິຈາລະນາເຫັນສັນຍາໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນສັນຍາ ພິຈາລະນາເຫັນສັງຂານທັງຫຼາຍໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັງຂານ ພິຈາລະນາເຫັນສັງຂານໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນສັງຂານ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນວິນຍານ ພິກຂຸຊື່ວ່າຍຶດຖື ເປັນແນວນີ້ແລ

ພິກຂຸຊື່ວ່າບໍ່ຍຶດຖື ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ເຫັນຮູບໂດຍຄວາມເປັນອັດຕາ ບໍ່ເຫັນອັດຕາວ່າມີຮູບ ບໍ່ເຫັນຮູບໃນອັດຕາ ບໍເຫັນອັດຕາໃນຮູບ ບໍ່ເຫັນເວທະນາໂດຍຄວາມເປັນອັດຕາ ບໍ່ເຫັນອັດຕາວ່າມີເວທະນາ ບໍ່ເຫັນເວທະນາໃນອັດຕາ ບໍເຫັນອັດຕາໃນເວທະນາ ບໍ່ເຫັນສັນຍາໂດຍຄວາມເປັນອັດຕາ ບໍ່ເຫັນອັດຕາວ່າມີສັນຍາ ບໍ່ເຫັນສັນຍາໃນອັດຕາ ຫຼືບໍ່ເຫັນອັດຕາໃນສັນຍາ ບໍ່ເຫັນສັງຂານໂດຍຄວາມເປັນອັດຕາ ບໍ່ເຫັນອັດຕາວ່າມີສັງຂານ ບໍ່ເຫັນສັງຂານໃນອັດຕາ ບໍເຫັນອັດຕາໃນສັງຂານ ບໍ່ເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ເຫັນອັດຕາວ່າມີວິນຍານ ບໍ່ເຫັນວິນຍານໃນອັດຕາ ບໍເຫັນອັດຕາໃນວິນຍານ ພິກຂຸຊື່ວ່າບໍ່ຍຶດຖື ເປັນແນວນີ້ແລ

ພິກຂຸຊື່ວ່າໂຕ້ຕອບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ດ່າໂຕ້ຕອບຄົນທີ່ດ່າ ໂກດຕອບຄົນທີ່ໂກດ ຖຽງໂຕ້ຕອບຄົນທີ່ຖຽງ ພິກຂຸຊື່ວ່າໂຕ້ຕອບ ເປັນແນວນີ້ແລ

ພິກຂຸຊື່ວ່າບໍ່ໂຕ້ຕອບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ດ່າໂຕ້ຕອບຄົນທີ່ດ່າ ບໍ່ໂກດຕອບຄົນທີ່ໂກດ ບໍ່ຖຽງໂຕ້ຕອບຄົນທີ່ຖຽງ ພິກຂຸຊື່ວ່າບໍ່ໂຕ້ຕອບ ເປັນແນວນີ້ແລ

ພິກຂຸຊື່ວ່າບັງຫວນຄວັນ ເປັນແນວໃດ?

ຄື ເມື່ອມີຕັນຫາວ່າ "ເຮົາເປັນ" ຕັນຫາວ່າ "ເຮົາເປັນແນວນີ້" ຈຶ່ງມີ ຕັນຫາວ່າ "ເຮົາເປັນແນວນັ້ນ" ຈຶ່ງມີ ຕັນຫາວ່າ "ເຮົາເປັນໂດຍປະການອື່ນ" ຈຶ່ງມີ ຕັນຫາວ່າ "ເຮົາເປັນຜູ້ທ່ຽງ" ຈຶ່ງມີ ຕັນຫາວ່າ "ເຮົາເປັນຜູ້ບໍ່ທ່ຽງ" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນ" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນ" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນ" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນແດ່" ຈຶ່ງມີ ຕັນຫາວ່າ "ເຮົາຈັກເປັນ" ຈຶ່ງມີ ຕັນຫາວ່າ "ເຮົາຈັກເປັນແນວນີ້" ຈຶ່ງມີ ຕັນຫາວ່າ "ເຮົາຈັກເປັນແນວນັ້ນ" ຈຶ່ງມີ ຕັນຫາວ່າ "ເຮົາຈັກ ເປັນໂດຍປະການອື່ນ" ຈຶ່ງມີ ພິກຂຸຊື່ວ່າບັງຫວນຄວັນ ເປັນແນວນີ້ແລ

ພິກຂຸຊື່ວ່າບໍ່ບັງຫວນຄວັນ ເປັນແນວໃດ?

ຄື ເມື່ອບໍ່ມີຕັນຫາວ່າ "ເຮົາເປັນ" ຕັນຫາວ່າ "ເຮົາເປັນແນວນີ້" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເປັນແນວນັ້ນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເປັນໂດຍປະກອບອື່ນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເປັນຜູ້ທ່ຽງ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເປັນຜູ້ບໍ່ທ່ຽງ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນແດ່" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ແດ່" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນແດ່" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການອື່ນແດ່" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາຈັກເປັນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາຈັກເປັນແນວນີ້" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາຈັກເປັນແນວນັ້ນ" ຈຶ່ງບໍ່ມີ ຕັນຫາວ່າ "ເຮົາຈັກເປັນໂດຍປະການອື່ນ" ຈຶ່ງບໍ່ມີ ພິກຂຸຊື່ວ່າບໍ່ບັງຫວນຄວັນ ເປັນແນວນີ້ແລ

ພິກຂຸຊື່ວ່າລຸກຮຸ່ງ ເປັນແນວໃດ?

ຄື ເມື່ອມີຕັນຫາວ່າ "ເຮົາເປັນດ້ວຍຂັນທະປັນຈະກະນີ້" ຕັນຫາວ່າ "ເຮົາເປັນແນວນີ້ດ້ວຍ ຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເປັນແນວນັ້ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເປັນຜູ້ທ່ຽງດ້ວຍ ຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເປັນຜູ້ບໍ່ທ່ຽງດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນໂດຍປະການນັ້ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາ ເພິ່ງເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນດ້ວຍຂັນທະປັນຈະກະ ນີ້ແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນີ້ດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວນັ້ນດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ ຕັນຫາວ່າ "ເຮົາເພິ່ງເປັນແນວອື່ນດ້ວຍຂັນທະປັນຈະກະນີ້ແດ່" ຈຶ່ງມີ ຕັນຫາວ່າ "ເຮົາຈັກເປັນ

ດ້ວຍຂັນທະປັນຈະກະນີ້” ຈຶ່ງມີ ຕັນຫາວ່າ “ເຮົາຈັກເປັນແນວນີ້ດ້ວຍຂັນທະປັນຈະກະນີ້” ຈຶ່ງມີ ຕັນຫາວ່າ “ເຮົາຈັກເປັນແນວນັ້ນດ້ວຍຂັນທະປັນຈະກະນີ້” ຈຶ່ງມີ ຕັນຫາວ່າ “ເຮົາຈັກເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້” ຈຶ່ງມີ ພິກຂຸຊື່ວ່າລຸກຮຸ່ງ ເປັນແນວນີ້ແລ

ພິກຂຸຊື່ວ່າບໍ່ລຸກຮຸ່ງ ເປັນແນວໃດ?

ຄື ເມື່ອບໍ່ມີຕັນຫາວ່າ “ເຮົາເປັນດ້ວຍຂັນທະປັນຈະກະນີ້” ຕັນຫາວ່າ “ເຮົາເປັນແນວນີ້ດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເປັນແນວນັ້ນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເປັນຜູ້ທ່ຽງດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເປັນຜູ້ບໍ່ທ່ຽງດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນແນວນີ້ດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນແນວນັ້ນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້ແດ່” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນດ້ວຍຂັນທະປັນຈະກະນີ້ແດ່” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນ ແນວນີ້ດ້ວຍຂັນທະປັນຈະກະນີ້ແດ່” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນແນວນັ້ນດ້ວຍຂັນທະປັນຈະກະ ນີ້ແດ່” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາເພິ່ງເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້ແດ່” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາຈັກເປັນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາຈັກເປັນແນວນີ້ດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີຕັນຫາວ່າ “ເຮົາຈັກເປັນແນວນັ້ນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ຕັນຫາວ່າ “ເຮົາຈັກເປັນໂດຍປະການອື່ນດ້ວຍຂັນທະປັນຈະກະນີ້” ຈຶ່ງບໍ່ມີ ພິກຂຸຊື່ວ່າບໍ່ລຸກຮຸ່ງ ເປັນແນວນີ້ແລ

ພິກຂຸຊື່ວ່າຖືກໄຟໄໝ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍັງລະອັດສະມິມານະບໍ່ໄດ້ເດັດຂາດ ຍັງບໍ່ໄດ້ຕັດຮາກກົ່ນເຫງົ້າໃຫ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າຖືກໄຟ ໄໝ້ ເປັນແນວນີ້ແລ

ພິກຂຸຊື່ວ່າບໍ່ຖືກໄຟໄໝ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ລະອັດສະມິມານະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າບໍ່ຖືກໄຟໄໝ້ເປັນແນວນີ້ແລ

**ເປມະສູດທີ ໑໐ ຈົບ**

**ມະຫາວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື


໑. ໂສຕານຸຄະຕະສູດ
໒. ພັດທິຍະສູດ
໕. ວັບປະສູດ
໗. ມັນລິກາເທວີສູດ
໙. ຕັນຫາສູດ
໔. ຖານະສູດ
໔. ສາປຸຄິຍາສູດ
໖ ສາລະຫະສູດ
໗. ອັດຕັນຕະປະສູດ
໑໐. ເປມະສູດ


**ຈະຕຸດຖະປັນນາດ ຈົບບໍລິບູນ**

# ๕. ປັນຈະມະປັນນາດ

## ໑. ສັບປຸຣິສະວັກ

### ໝວດວ່າດ້ວຍສັດຕະບຸຣຸດ

## ໑. ສິກຂາປະທະສູດ

### ວ່າດ້ວຍສິກຂາບົດ

[໔໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ[1] ແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດ[2]ແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດແກ່ທ່ານທັງຫຼາຍ[3] ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງ ພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຕົນເອງເປັນຜູ້ລັກຊັບແລະຊັກຊວນຜູ້ອື່ນໃຫ້ລັກຊັບ ຕົນເອງເປັນຜູ້ປະພຶດຜິດໃນກາມແລະຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ ຕົນເອງເປັນຜູ້ເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ເວົ້າຕົວະ ຕົນເອງເປັນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລະຊັກຊວນ ຜູ້ອື່ນໃຫ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້

ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມ ຜະໝາດ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມແລະຊັກຊວນ ຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລະຊັກຊວນຜູ້ອື່ນ ໃຫ້ງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ ທີ່ຍິ່ງກວ່າສັດຕະບຸຣຸດ

**ສິກຂາປະທະສູດທີ ໑ ຈົບ**

## ໔. ອັດສັດທະສູດ

## ວ່າດ້ວຍຜູ້ບໍ່ມີສັດທາແລະຜູ້ມີສັດທາ

[໔໐໔] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ມີສັດທາ ບໍ່ມີຫິຣິ ບໍ່ມີໂອດຕັບປະ ມີສຸຕະໜ້ອຍ[໑] ເປັນຜູ້ຂີ້ຄ້ານ ຫຼົງລືມສະຕິ ມີປັນຍາຊາມ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ມີສັດທາແລະຊັກຊວນຜູ້ອື່ນໃຫ້ບໍ່ມີສັດທາ ຕົນເອງເປັນຜູ້ບໍ່ມີຫິຣິແລະຊັກຊວນຜູ້ອື່ນໃຫ້ບໍ່ມີຫິຣິ ຕົນເອງເປັນຜູ້ບໍ່ມີໂອດຕັບປະແລະຊັກຊວນຜູ້ອື່ນໃຫ້ບໍ່ມີໂອດຕັບປະ ຕົນເອງເປັນຜູ້ມີສຸຕະໜ້ອຍແລະຊັກຊວນຜູ້ອື່ນໃຫ້ມີສຸຕະໜ້ອຍ ຕົນເອງ

ເປັນຜູ້ຂີ້ຄ້ານແລະຊັກຊວນຜູ້ອື່ນໃຫ້ຂີ້ຄ້ານ ຕົນເອງຫຼົງລືມສະຕິແລະຊັກຊວນຜູ້ອື່ນໃຫ້ຫຼົງລືມສະຕິ ຕົນເອງມີປັນຍາຊາມແລະຊັກຊວນຜູ້ອື່ນໃຫ້ມີປັນຍາຊາມ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສັດທາ ມີຫິຣິ ມີໂອດຕັບປະ ເປັນພະຫູສູດ ຜາຣົບຄວາມພຽນ ມີສະຕິ ມີປັນຍາ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສັດທາແລະຊັກຊວນຜູ້ອື່ນໃຫ້ມີສັດທາ ຕົນເອງເປັນຜູ້ມີຫິຣິແລະຊັກຊວນຜູ້ອື່ນໃຫ້ມີຫິຣິ ຕົນເອງເປັນຜູ້ມີໂອດຕັບປະແລະຊັກຊວນ ຜູ້ອື່ນໃຫ້ມີໂອດຕັບປະ ຕົນເອງເປັນພະຫູສູດແລະຊັກຊວນຜູ້ອື່ນໃຫ້ເປັນພະຫູສູດ ຕົນເອງມີສະຕິຕັ້ງໝັ້ນແລະຊັກຊວນຜູ້ອື່ນໃຫ້ມີສະຕິຕັ້ງໝັ້ນ ຕົນເອງເປັນຜູ້ມີປັນຍາແລະຊັກຊວນຜູ້ອື່ນໃຫ້ມີປັນຍາ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ອັດສັດທະສູດທີ ໘ ຈົບ**

## ໙. ສັດຕະກຳມະສູດ

## ວ່າດ້ວຍກຳ ໗ ປະການ

[໔໐໙] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ ແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[១]

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຕົນເອງເປັນຜູ້ລັກຊັບແລະຊັກຊວນຜູ້ອື່ນໃຫ້ລັກຊັບ ຕົນເອງເປັນຜູ້ປະພຶດຜິດໃນກາມແລະຊັກຊວນຜູ້ອື່ນ

ໃຫ້ປະພຶດຜິດໃນກາມ ຕົນເອງເປັນຜູ້ເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ເວົ້າຕົວະ ຕົນເອງເປັນຜູ້ເວົ້າສັບສໍ່ແລະຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່ ຕົນເອງເປັນຜູ້ເວົ້າຄຳຫຍາບແລະຊັກຊວນຜູ້ອື່ນໃຫ້ເວົ້າຄຳຫຍາບ ຕົນເອງເປັນຜູ້ເວົ້າບໍ່ມີສາຣະແລະຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າ ອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່ ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່ແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄຳຫຍາບ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາຣະ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ສັດຕະກຳມະສູດທີ ໓ ຈົບ**

## ໔. ທະສະກຳມະສູດ

## ວ່າດ້ວຍກຳ ໑໐ ປະການ

[໔໐໔] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ ແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[1]

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ[6] ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ເປັນຜູ້ມີຈິດພະຍາບາດ ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຯລຯ[6] ຕົນເອງເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາແລະຊັກຊວນຜູ້ອື່ນໃຫ້ເພ່ງເລັງຢາກໄດ້ຂອງເຂົາ ຕົນເອງເປັນຜູ້ມີຈິດພະຍາບາດແລະຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ ຕົນເອງເປັນມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ[6] ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ເປັນຜູ້ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຯລຯ[6] ຕົນເອງເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາແລະຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຕົນເອງເປັນຜູ້ມີຈິດບໍ່ພະຍາບາດແລະຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ ຕົນເອງເປັນສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ທະສະກຳມະສູດທີ ໔ ຈົບ**

## ໕. ອັດຖັງຄິກະສູດ

## ວ່າດ້ວຍມັກມີອົງ ໘

[໔໐໕] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[9]

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີມິດສາທິດຖິ (ເຫັນຜິດ) ມີມິດສາສັງກັບປະ (ດຳຣິຜິດ) ມີມິດສາວາຈາ (ເຈຣະຈາຜິດ) ມີມິດສາກຳມັນຕະ (ກະທຳຜິດ) ມີມິດສາອາຊີວະ (ລ້ຽງຊີບຜິດ) ມີ ມິດສາວາຍາມະ (ພະຍາຍາມຜິດ) ມີມິດສາສະຕິ (ຣະນຶກຜິດ) ມີມິດສາສະມາທິ (ຕັ້ງຈິດໝັ້ນຜິດ) ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ມີມິດສາທິດຖິ ຕົນເອງເປັນຜູ້ມີມິດສາສັງກັບປະແລະຊັກຊວນຜູ້ອື່ນໃຫ້ມີມິດສາສັງກັບປະ ຕົນເອງເປັນຜູ້ມີມິດສາວາຈາແລະຊັກຊວນຜູ້ອື່ນໃຫ້ມີມິດສາວາຈາ ຕົນເອງເປັນຜູ້ມີມິດສາກຳມັນຕະແລະຊັກຊວນຜູ້ອື່ນໃຫ້ມີມິດສາກຳມັນຕະ ຕົນເອງເປັນຜູ້ມີມິດສາອາຊີວະແລະຊັກຊວນຜູ້ອື່ນໃຫ້ມີມິດສາອາຊີວະ ຕົນເອງເປັນຜູ້ມີ ມິດສາວາຍາມະແລະຊັກຊວນຜູ້ອື່ນໃຫ້ມີມິດສາວາຍາມະ ຕົນເອງເປັນຜູ້ມີມິດສາສະຕິແລະຊັກຊວນຜູ້ອື່ນໃຫ້ມີມິດສາສະຕິ ຕົນເອງເປັນຜູ້ມີມິດສາສະມາທິແລະຊັກຊວນຜູ້ອື່ນໃຫ້ມີມິດສາສະມາທິ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສຳມາທິດຖິ (ເຫັນຖືກ) ມີສຳມາສັງກັບປະ (ດຳຣິຖືກ) ມີສຳມາວາຈາ (ເຈຣະຈາຖືກ) ມີສຳມາກຳມັນຕະ (ການງານຖືກ) ມີສຳມາອາຊີວະ (ລ້ຽງຊີບຖືກ) ມີສຳມາວາຍາມະ (ພະຍາຍາມຖືກ) ມີສຳມາສະຕິ (ຣະນຶກຖືກ) ມີສຳມາສະມາທິ (ຕັ້ງຈິດໝັ້ນຖືກ) ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ມີສຳມາທິດຖິ ຕົນເອງເປັນຜູ້ມີສຳມາສັງກັບປະແລະຊັກຊວນຜູ້ອື່ນໃຫ້ມີສຳມາສັງກັບປະ ຕົນເອງເປັນຜູ້ມີສຳມາວາຈາແລະຊັກຊວນຜູ້ອື່ນໃຫ້ມີສຳມາວາຈາ ຕົນເອງເປັນຜູ້ມີສຳມາກຳມັນຕະແລະ ຊັກຊວນຜູ້ອື່ນໃຫ້ມີສຳມາກຳມັນຕະ ຕົນເອງເປັນຜູ້ມີສຳມາອາຊີວະແລະຊັກຊວນຜູ້ອື່ນໃຫ້ມີ ສຳມາອາຊີວະ ຕົນເອງເປັນຜູ້ມີສຳມາວາຍາມະແລະຊັກຊວນຜູ້ອື່ນໃຫ້ມີສຳມາວາຍາມະ ຕົນເອງເປັນຜູ້ມີສຳມາສະຕິແລະຊັກຊວນຜູ້ອື່ນໃຫ້ມີສຳມາສະຕິ ຕົນເອງເປັນຜູ້ມີສຳມາສະມາທິແລະຊັກຊວນ ຜູ້ອື່ນໃຫ້ມີສຳມາສະມາທິ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ອັດຖັງຄິກະສູດທີ ໕ ຈົບ**

## ໖. ທະສະມັກຄະສູດ
## ວ່າດ້ວຍມັກ ໑໐ ປະການ

[໔໐໖] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ ແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ຈັກສະແດງສັດຕະບຸຣຸດແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ໆລໆ[໑]

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີມິດສາທິດຖິ ໆລໆ[໒] ມີມິດສາຍານະ ມີມິດສາວິມຸດຕິ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ມີມິດສາທິດຖິ ໆລໆ[໒] ຕົນເອງເປັນຜູ້ມີມິດສາຍານະແລະຊັກຊວນຜູ້ອື່ນໃຫ້ມີມິດສາຍານະ ຕົນເອງເປັນຜູ້ມີມິດສາວິມຸດຕິ ແລະຊັກຊວນຜູ້ອື່ນໃຫ້ມີມິດສາວິມຸດຕິ ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສຳມາທິດຖິ ໆລໆ[໑] ມີສຳມາຍານະ ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ມີສຳມາທິດຖິ ໆລໆ[໑] ຕົນເອງເປັນຜູ້ມີສຳມາຍານະແລະຊັກຊວນຜູ້ອື່ນໃຫ້ມີສຳມາຍານະ ຕົນເອງເປັນຜູ້ມີສຳມາວິມຸດຕິແລະຊັກຊວນຜູ້ອື່ນໃຫ້ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ທະສະມັກຄະສູດທີ ໖ ຈົບ**

## ໗. ປະຖົມປາປະທຳມະສູດ
## ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໑

[໔໐໗] ພິກຂຸທັງຫຼາຍ ເຮົາຈັກສະແດງຄົນຊົ່ວແລະຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ຈັກສະແດງຄົນດີແລະຄົນດີທີ່ຍິ່ງກວ່າຄົນດີ[໒] ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ໆລໆ[໓]

ຄົນຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ຂ້າສັດ ຯລຯ[໕] ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ຄົນຊົ່ວ

ຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຕົນເອງເປັນຜູ້ຂ້າສັດແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຯລຯ[໕] ຕົນເອງເປັນມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ

ຄົນດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ[໑] ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ຄົນດີ

ຄົນດີທີ່ຍິ່ງກວ່າຄົນດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຯລຯ໑ ຕົນເອງເປັນສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນ ສຳມາທິດຖິ ບຸກຄົນນີ້ຮຽກວ່າ ຄົນດີທີ່ຍິ່ງກວ່າຄົນດີ

**ປະຖົມປາປະທຳມະສູດທີ ໗ ຈົບ**

## ໘. ທຸຕິຍະປາປະທຳມະສູດ

## ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໘

[໔໐໘] ພິກຂຸທັງຫຼາຍ ເຮົາຈັກສະແດງຄົນຊົ່ວແລະຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ຈັກສະແດງຄົນດີແລະຄົນດີທີ່ຍິ່ງກວ່າຄົນດີແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[໒]

ຄົນຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີມິດສາທິດຖິ ຯລຯ[໓] ມີມິດສາຍານະ (ຮູ້ຜິດ) ມີມິດສາວິມຸດຕິ (ລຸດພົ້ນຜິດ) ບຸກຄົນນີ້ຮຽກວ່າ ຄົນຊົ່ວ

ຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຕົນເອງເປັນຜູ້ມີມິດສາທິດຖິ ແລະຊັກຊວນຜູ້ອື່ນໃຫ້ມີມິດສາທິດຖິ ຯລຯ[໓] ຕົນເອງເປັນຜູ້ມີມິດສາຍານະແລະຊັກຊວນຜູ້ອື່ນໃຫ້ມີມິດສາຍານະ ຕົນເອງ

ເປັນຜູ້ມີມິດສາວິ ມຸດຕິແລະຊັກຊວນຜູ້ອື່ນໃຫ້ມີມິດສາວິມຸດຕິ ບຸກຄົນນີ້ຮຽກວ່າ ຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ

ຄົນດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສຳມາທິດຖິ ຯລຯ[๑] ມີສຳມາຍານະ ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ຄົນດີ

ຄົນດີທີ່ຍິ່ງກວ່າຄົນດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ມີສຳມາທິດຖິ ຯລຯ[๑] ຕົນເອງເປັນຜູ້ມີສຳມາຍານະແລະຊັກຊວນຜູ້ອື່ນໃຫ້ມີສຳມາຍານະ ຕົນເອງເປັນຜູ້ມີສຳມາວິມຸດຕິແລະຊັກຊວນຜູ້ອື່ນໃຫ້ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ຄົນດີທີ່ຍິ່ງກວ່າຄົນດີ

**ທຸຕິຍະປາປະທຳມະສູດທີ ໒ ຈົບ**

## ໗. ຕະຕິຍະປາປະທຳມະສູດ

## ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໓

[໔໐໗] ພິກຂຸທັງຫຼາຍ ເຮົາຈັກສະແດງບຸກຄົນຜູ້ມີທຳຊົ່ວ ແລະບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ຈັກສະແດງບຸກຄົນຜູ້ມີທຳດີແລະບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[๔]

ບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ[๑] ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳຊົ່ວ

ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຯລຯ[๑] ຕົນເອງເປັນມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ

ບຸກຄົນຜູ້ມີທຳດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ[๑] ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳດີ

ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ ຯລຯ[໑] ຕົນເອງເປັນສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ

**ຕະຕິຍະປາປະທຳມະສູດທີ ໗ ຈົບ**

## ໑໐. ຈະຕຸດຖະປາປະທຳມະສູດ

## ວ່າດ້ວຍທຳຊົ່ວແລະທຳດີ ສູດທີ ໘

[໘໑໐] ພິກຂຸທັງຫຼາຍ ເຮົາຈັກສະແດງບຸກຄົນຜູ້ມີທຳຊົ່ວ ແລະບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ຈັກສະແດງບຸກຄົນຜູ້ມີທຳດີແລະບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[໒]

ບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີມິດສາທິດຖິ ຯລຯ[໓] ມີມິດສາຍານະ ມີມິດສາວິມຸດຕິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳຊົ່ວ

ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ມີມິດສາທິດຖິ ຯລຯ[໓] ຕົນເອງເປັນຜູ້ມີມິດສາຍານະແລະຊັກຊວນຜູ້ອື່ນໃຫ້ມີມິດສາຍານະ ຕົນເອງເປັນຜູ້ມີມິດສາວິມຸດຕິແລະຊັກຊວນຜູ້ອື່ນໃຫ້ມີມິດສາວິມຸດຕິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ

ບຸກຄົນຜູ້ມີທຳດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສຳມາທິດຖິ ຯລຯ[໓] ມີສຳມາຍານະ ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳດີ

ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕົນເອງເປັນຜູ້ມີສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ມີສຳມາທິດຖິ ຯລຯ[1] ຕົນເອງເປັນຜູ້ມີສຳມາຍານະແລະຊັກຊວນຜູ້ອື່ນໃຫ້ມີສຳມາຍານະ ຕົນເອງເປັນຜູ້ມີສຳມາວິມຸດຕິແລະຊັກຊວນຜູ້ອື່ນໃຫ້ມີສຳມາວິມຸດຕິ ບຸກຄົນນີ້ຮຽກວ່າ ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ

**ຈະຕຸດຖະປາປະທຳມະສູດທີ ໑໐ ຈົບ**

**ສັບປຸຣິສະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ສິກຂາປະທະສູດ
໒. ອັດສັດທະສູດ
໓. ສັດຕະກຳມະສູດ
໔. ທະສະກຳມະສູດ
໕. ອັດຖັງຄິກະສູດ
໖. ທະສະມັກຄະສູດ
໗. ປະຖົມປາປະທຳມະສູດ
໘. ທຸຕິຍະປາປະທຳມະສູດ
໙. ຕະຕິຍະປາປະທຳມະສູດ
໑໐. ຈະຕຸດຖະປາປະທຳມະສູດ


# ໔. ໂສພະນະວັກ

## ໝວດວ່າດ້ວຍຜູ້ເຮັດບໍລິສັດໃຫ້ງາມ

## ໑. ປະຣິສາສູດ

### ວ່າດ້ວຍບໍລິສັດ

[໔໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ເປັນຜູ້ປະທຸດສະຮ້າຍບໍລິສັດ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ທຸສິນ ມີທຳຊົ່ວຊາມ
໒. ພິກຂຸນີຜູ້ທຸສິນ ມີທຳຊົ່ວຊາມ
໓. ອຸປາສົກຜູ້ທຸສິນ ມີທຳຊົ່ວຊາມ

໔. ອຸປາສິກາຜູ້ທຸສິນ     ມີທຳຊົ່ວຊາມ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລເປັນຜູ້ປະທຸດສະຮ້າຍບໍລິສັດ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ເປັນຜູ້ເຮັດບໍລິສັດໃຫ້ງາມ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ມີສິນ     ມີກັນລະຍານະທຳ
໒. ພິກຂຸນີຜູ້ມີສິນ     ມີກັນລະຍານະທຳ
໓. ອຸປາສົກຜູ້ມີສິນ     ມີກັນລະຍານະທຳ
໔. ອຸປາສິກາຜູ້ມີສິນ     ມີກັນລະຍານະທຳ

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລເປັນຜູ້ເຮັດບໍລິສັດໃຫ້ງາມ

**ປະຣິສາສູດທີ ໑ ຈົບ**

## ໒. ທິດຖິສູດ

## ວ່າດ້ວຍທິດຖິ

[໔໑໒] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ     (ຄວາມປະພຶດຊົ່ວດ້ວຍກາຍ)
໒. ວະຈີທຸດຈະຣິດ     (ຄວາມປະພຶດຊົ່ວດ້ວຍວາຈາ)
໓. ມະໂນທຸດຈະຣິດ     (ຄວາມປະພຶດຊົ່ວດ້ວຍໃຈ)
໔. ມິດສາທິດຖິ     (ຄວາມເຫັນຜິດ)

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ)
໒. ວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ)
໓. ມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ)
໔. ສຳມາທິດຖິ (ຄວາມເຫັນຖືກ)

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທິດຖິສູດທີ ໒ ຈົບ**

## ໓. ອະກະຕັນຍຸຕາສູດ

## ວ່າດ້ວຍຄວາມເປັນຜູ້ບໍ່ຮູ້ຄຸນແລະຄວາມເປັນຜູ້ຮູ້ຄຸນ

[໔໑໓] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້
ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ
໒. ວະຈີທຸດຈະຣິດ
໓. ມະໂນທຸດຈະຣິດ
໔. ອະກະຕັນຍຸຕາ ອະກະຕະເວທິຕາ[១]

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້
ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ
໒. ວະຈີສຸດຈະຣິດ
໓. ມະໂນສຸດຈະຣິດ

໔.ກະຕັນຍຸຕາ ກະຕະເວທິຕາ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ ໃນສະຫວັນຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະກະຕັນຍຸຕາສູດທີ ໓ ຈົບ**

# ໔. ປານາຕິປາຕິສູດ

## ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ

[໘໑໔] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄື ຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ

ຯລຯ

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ

ຯລຯ

**ປານາຕິປາຕິສູດທີ ໔ ຈົບ**

# ໕. ປະຖົມມັກຄະສູດ

## ວ່າດ້ວຍມັກ ສູດທີ ໑

[໘໑໕] ຯລຯ

໑. ມີມິດສາທິດຖິ (ເຫັນຜິດ)

໒. ມີມິດສາສັງກັບປະ (ດຳຣິຜິດ)
໓. ມີມິດສາວາຈາ (ເຈຣະຈາຜິດ)
໔. ມີມິດສາກຳມັນຕະ (ກະທຳຜິດ)

ฯลฯ

໑. ມີສຳມາທິດຖິ (ເຫັນຖືກ)
໒. ມີສຳມາສັງກັບປະ (ຄິດຖືກ)
໓. ມີສຳມາວາຈາ (ເຈຣະຈາຖືກ)
໔. ມີສຳມາກຳມັນຕະ (ການງານຖືກ)

ฯลฯ

**ປະຖົມມັກຄະສູດທີ ໕ ຈົບ**

## ໖. ທຸຕິຍະມັກຄະສູດ

## ວ່າດ້ວຍມັກ ສູດທີ ໒

[໔໑໖] ฯลฯ

໑. ມີມິດສາອາຊີວະ (ລ້ຽງຊີບຜິດ)
໒. ມີມິດສາວາຍາມະ (ພະຍາຍາມຜິດ)
໓. ມີມິດສາສະຕິ (ຣະນຶກຜິດ)
໔. ມີມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

ฯลฯ

໑. ມີສຳມາອາຊີວະ (ລ້ຽງຊີວິດຖືກ)
໒. ມີສຳມາວາຍາມະ (ພະຍາຍາມຖືກ)
໓. ມີສຳມາສະຕິ (ຣະນຶກຖືກ)
໔. ມີສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ฯลฯ

**ທຸຕິຍະມັກຄະສູດທີ ໖ ຈົບ**

# ໗. ປະຖົມໂວຫາຣະປະຖະສູດ

## ວ່າດ້ວຍຄັນລອງແຫ່ງໂວຫານ ສູດທີ ໑

[໔໑໗] ຯລຯ¹

໑. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ເຫັນວ່າໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຟັງວ່າໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຊາບວ່າໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຮູ້ວ່າໄດ້ຮູ້

ຯລຯ¹

໑. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຊາບວ່າບໍ່ໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຮູ້ວ່າບໍ່ໄດ້ຮູ້

ຯລຯ¹

**ປະຖົມໂວຫາຣະປະຖະສູດທີ ໗ ຈົບ**

# ໘. ທຸຕິຍະໂວຫາຣະປະຖະສູດ

## ວ່າດ້ວຍຄັນລອງແຫ່ງໂວຫານ ສູດທີ ໒

[໔໑໘] ຯລຯ¹

໑. ເປັນຜູ້ກ່າວສິ່ງທີ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ໄດ້ຊາບວ່າບໍ່ໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ໄດ້ຮູ້ວ່າບໍ່ໄດ້ຮູ້

ຯລຯ໑

໑. ເປັນຜູ້ກ່າວສິ່ງທີ່ໄດ້ເຫັນວ່າໄດ້ເຫັນ

໒. ເປັນຜູ້ກ່າວສິ່ງທີ່ໄດ້ຟັງວ່າໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ໄດ້ຊາບວ່າໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ໄດ້ຮູ້ວ່າໄດ້ຮູ້

ฯลฯ๑

**ທຸຕິຍະໂວຫານປະຖະສູດທີ ๘ ຈົບ**

## ໙. ອະຫິຣິກະສູດ

### ວ່າດ້ວຍຜູ້ບໍ່ມີຫິຣິແລະຜູ້ມີຫິຣິ

[໔໑໙] ฯลฯ๊

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ທຸສິນ
໓. ເປັນຜູ້ບໍ່ມີຫິຣິ
໔. ເປັນຜູ້ບໍ່ມີໂອດຕັບປະ

ฯลฯ๊

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ມີໂອດຕັບປະ

ฯลฯ๊

**ອະຫິຣິກະສູດທີ ໙ ຈົບ**

## ໑໐. ທຸດສີລະສູດ

### ວ່າດ້ວຍຜູ້ທຸສິນແລະຜູ້ມີສິນ

[໔໒໐] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຮົກຄື ຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ທຸສີນ
໓. ເປັນຜູ້ຂີ້ຄ້ານ
໔. ເປັນຜູ້ມີປັນຍາຊາມ

ฯลฯ[1]

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ພາຣົບຄວາມພຽນ
໔. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນ ສະຫວັນຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທຸດສີລະສູດທີ ໑໐ ຈົບ**

**ໂສພະນະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຣິສາສູດ
໒. ທິດຖິສູດ
໓. ອະກະຕັນຍຸຕາສູດ
໔. ປານາຕິປາຕິສູດ
໕. ປະຖົມມັກຄະສູດ
໖. ທຸຕິຍະມັກຄະສູດ
໗. ປະຖົມໂວຫາຣະປະຖະສູດ
໘. ທຸຕິຍະໂວຫາຣະປະຖະສູດ
໙. ອະຫິຣິກະສູດ
໑໐. ທຸດສີລະສູດ

# ໓. ທຸດຈະຣິຕະວັກ
## ໝວດວ່າດ້ວຍທຸດຈະຣິດແລະສຸດຈະຣິດ
## ໑. ທຸດຈະຣິຕະສູດ
## ວ່າດ້ວຍທຸດຈະຣິດແລະສຸດຈະຣິດ

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ວະຈີທຸດຈະຣິດ ໔ ປະການນີ້ ວະຈີທຸດຈະຣິດ ໔ ປະການ ອັນໃດແດ່ ຄື

໑. ມຸສາວາທະ (ເວົ້າຕົວະ)
໒. ປິສຸນາວາຈາ (ເວົ້າສັບສໍ່)
໓. ຜະຣຸສະວາຈາ (ເວົ້າຄຳຫຍາບ)
໔. ສຳຜັບປະລາປະ (ເວົ້າບໍ່ມີສາຣະ)

ພິກຂຸທັງຫຼາຍ ວະຈີທຸດຈະຣິດ ໔ ປະການນີ້ແລ
ພິກຂຸທັງຫຼາຍ ວະຈີສຸດຈະຣິດ ໔ ປະການນີ້
ວະຈີສຸດຈະຣິດ ໔ ປະການ ອັນໃດແດ່ ຄື

໑. ສັດຈະວາຈາ (ເວົ້າຈິງ)
໒. ອະປິສຸນາວາຈາ (ເວົ້າບໍ່ສັບສໍ່)
໓. ສັນຫະວາຈາ (ເວົ້າອ່ອນຫວານ)
໔. ມັນຕະພາສາ[1] (ເວົ້າດ້ວຍປັນຍາ)

ພິກຂຸທັງຫຼາຍ ວະຈີສຸດຈະຣິດ ໔ ປະການນີ້ແລ

**ທຸດຈະຣິຕະສູດທີ ໑ ຈົບ**

## ໒. ທິດຖິສູດ
## ວ່າດ້ວຍທິດຖິ

[໔໔໒] ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍ ທຳ ໔ ປະການຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນແລະປະ ສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ)
໒. ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ)
໓. ມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ)
໔. ມິດສາທິດຖິ (ຄວາມເຫັນຜິດ)

ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະປະສົບບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ)
໒. ວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ)
໓. ມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ)
໔. ສຳມາທິດຖິ (ຄວາມເຫັນຖືກ)

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະປະສົບບຸນຫຼວງຫຼາຍ

**ທິດຖິສູດທີ ໒ ຈົບ**

## ໓. ອະກະຕັນຍຸຕາສູດ

## ວ່າດ້ວຍຄວາມເປັນຜູ້ບໍ່ຮູ້ຄຸນແລະຄວາມເປັນຜູ້ຮູ້ຄຸນ

[໒໒໓] ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍ ທຳ ໔ ປະການຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ
໒. ວະຈີທຸດຈະຣິດ
໓. ມະໂນທຸດຈະຣິດ
໔. ອະກະຕັນຍຸຕາ ອກະຕະເວທິຕາ[๑]

ຯລຯ

໑. ກາຍສຸດຈະຣິດ
໒. ວະຈີສຸດຈະຣິດ
໓. ມະໂນສຸດຈະຣິດ
໔. ກະຕັນຍຸຕາ ກະຕະເວທິຕາ

ຯລຯ

**ອະກະຕັນຍຸຕາສູດທີ ໓ ຈົບ**

# ໔. ປານາຕິປາຕິສູດ

## ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ

[໒໒໔] ຯລຯ

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ

ຯລຯ

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ

ຯລຯ

**ປານາຕິປາຕິສູດທີ ໔ ຈົບ**

# ໕. ປະຖົມມັກຄະສູດ
## ວ່າດ້ວຍມັຄ ສູດທີ ໑

[໒໒໕] ຯລຯ

໑. ມີມິດສາທິດຖິ
໒. ມີມິດສາສັງກັບປະ
໓. ມີມິດສາວາຈາ
໔. ມີມິດສາກຳມັນຕະ

ຯລຯ

໑. ມີສຳມາທິດຖິ
໒. ມີສຳມາສັງກັບປະ
໓. ມີສຳມາວາຈາ
໔. ມີສຳມາກຳມັນຕະ

ຯລຯ

**ປະຖົມມັກຄະສູດທີ ໕ ຈົບ**

# ໖. ທຸຕິຍະມັກຄະສູດ
## ວ່າດ້ວຍມັກ ສູດທີ ໒

[໒໒໖] ຯລຯ

໑. ມີມິດສາອາຊີວະ
໒. ມີມິດສາວາຍາມະ
໓. ມີມິດສາສະຕິ
໔. ມີມິດສາສະມາທິ

ຯລຯ

໑. ມີສຳມາອາຊີວະ
໒. ມີສຳມາວາຍາມະ
໓. ມີສຳມາສະຕິ
໔. ມີສຳມາສະມາທິ

ຯລຯ

**ທຸຕິຍະມັກຄະສູດທີ ໖ ຈົບ**

# ៗ. ປະຖົມໂວຫາຣະປະຖະສູດ[៦]

## ວ່າດ້ວຍຄັນລອງແຫ່ງໂວຫານ ສູດທີ ໑

[໒໒ៗ] ຯລຯ

໑. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ເຫັນວ່າໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຟັງວ່າໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຊາບວ່າໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຮູ້ວ່າໄດ້ຮູ້

ຯລຯ

໑. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຊາບວ່າບໍ່ໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ບໍ່ໄດ້ຮູ້ວ່າບໍ່ໄດ້ຮູ້

ຯລຯ

**ປະຖົມໂວຫາຣະປະຖະສູດທີ ៗ ຈົບ**

# ៘. ທຸຕິຍະໂວຫາຣະປະຖະສູດ[៦]

## ວ່າດ້ວຍຄັນລອງແຫ່ງໂວຫານ ສູດທີ ໒

[໒໒៘] ຯລຯ

໑. ເປັນຜູ້ກ່າວສິ່ງທີ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ເປັນຜູ້ກ່າວສິ່ງທີ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ໄດ້ຊາບວ່າບໍ່ໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ໄດ້ຮູ້ວ່າບໍ່ໄດ້ຮູ້

ຯລຯ

໑. ເປັນຜູ້ກ່າວສິ່ງທີ່ໄດ້ເຫັນວ່າໄດ້ເຫັນ

໔. ເປັນຜູ້ກ່າວສິ່ງທີ່ໄດ້ຟັງວ່າໄດ້ຟັງ
໓. ເປັນຜູ້ກ່າວສິ່ງທີ່ໄດ້ຊາບວ່າໄດ້ຊາບ
໔. ເປັນຜູ້ກ່າວສິ່ງທີ່ໄດ້ຮູ້ວ່າໄດ້ຮູ້

ຯລຯ໑

**ທຸຕິຍະໂວຫາຣະປະຖະສູດທີ ໘ ຈົບ**

## ໙. ອະຫິຣິກະສູດ

## ວ່າດ້ວຍຜູ້ບໍ່ມີຫິຣິແລະຜູ້ມີຫິຣິ

[໔໔໙] ຯລຯ໑

໑. ເປັນຜູ້ບໍ່ມີສັດທາ
໓. ເປັນຜູ້ບໍ່ມີຫິຣິ
໔. ເປັນຜູ້ທຸສີນ
໔. ເປັນຜູ້ບໍ່ມີໂອດຕັບປະ

ຯລຯ໑

໑. ເປັນຜູ້ມີສັດທາ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ມີສີນ
໔. ເປັນຜູ້ມີໂອດຕັບປະ

ຯລຯ໑

**ອະຫິຣິກະສູດທີ ໙ ຈົບ**

## ໑໐. ທຸບປັນຍະສູດ

## ວ່າດ້ວຍຜູ້ມີປັນຍາຊາມແລະຜູ້ມີປັນຍາດີ

[໔໓໐] ຯລຯ໑

໑. ເປັນຜູ້ບໍ່ມີສັດທາ
໓. ເປັນຜູ້ຂີ້ຄ້ານ
໔. ເປັນຜູ້ທຸສີນ
໔. ເປັນຜູ້ມີປັນຍາຊາມ

ຯລຯ໑

໑. ເປັນຜູ້ມີສັດທາ ໒. ເປັນຜູ້ມີສີນ
໓. ເປັນຜູ້ຜາຣົບຄວາມພຽນ ໔. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະປະສົບບຸນຫຼວງຫຼາຍ

**ທຸບປັນຍະສູດທີ ໑໐ ຈົບ**

## ໑໑. ກະວິສູດ

## ວ່າດ້ວຍກະວີ

[໔໓໑] ພິກຂຸທັງຫຼາຍ ກະວີ ໔ ຈຳພວກນີ້

ກະວີ ໔ ຈຳພວກ ພວກໃດແດ່ ຄື

໑. ຈິນຕາກະວີ[๑] ໒. ສຸຕະກະວີ[๒]
໓. ອັດຖະກະວີ[๓] ໔. ປະຕິພານະກະວີ[๔]

ພິກຂຸທັງຫຼາຍ ກະວີ ໔ ຈຳພວກນີ້ແລ

**ກະວິສູດທີ ໑໑ ຈົບ**

**ທຸດຈະຣິຕະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ທຸດຈະຣິຕະສູດ ໒. ທິດຖິສູດ
໓. ອະກະຕັນຍຸຕາສູດ ໔. ປານາຕິປາຕີສູດ
໕. ປະຖົມມັກຄະສູດ ໖. ທຸຕິຍະມັກຄະສູດ
໗. ປະຖົມໂວຫາຣະປະຖະສູດ ໘. ທຸຕິຍະໂວຫາຣະປະຖະສູດ
໙. ອະຫິຣິກະສູດ ໑໐. ທຸບປັນຍະສູດ
໑໑. ກະວິສູດ

# ໔. ກຳມະວັກ

## ໝວດວ່າດ້ວຍກຳ

## ໑. ສັງຂິດຕະສູດ

### ວ່າດ້ວຍກຳແລະວິບາກແຫ່ງກຳໂດຍຫຍໍ້

[໒໓໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ[1] ອັນໃດແດ່ ຄື

໑. ກຳດຳ[2]ມີວິບາກດຳ[3]
໒. ກຳຂາວມີວິບາກຂາວ[4]
໓. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ
໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ[5] ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

**ສັງຂິດຕະສູດທີ ໑ ຈົບ**

## ໒. ວິດຖາຣະສູດ

### ວ່າດ້ວຍກຳແລະວິບາກແຫ່ງກຳໂດຍພິດສະດານ

[໒໓໓] ພິກຂຸທັງຫຼາຍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ
໒. ກຳຂາວມີວິບາກຂາວ

໓. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງ[໑]ກາຍສັງຂານ[໒]ທີ່ມີຄວາມບຽດບຽນ[໓] ປຸງແຕ່ງວະຈີສັງຂານ[໔]ທີ່ມີຄວາມບຽດບຽນ ແລະປຸງແຕ່ງມະໂນສັງຂານ[໕]ທີ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນ ຜັດສະທີ່ມີຄວາມບຽດບຽນຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ມີຄວາມບຽດບຽນກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນເປັນທຸກໂດຍສ່ວນດຽວຄືພວກສັດນະຣົກ ນີ້ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານທີ່ບໍ່ມີຄວາມບຽດບຽນແລະປຸງແຕ່ງມະໂນສັງຂານທີ່ບໍ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນ ຜັດສະທີ່ບໍ່ມີຄວາມບຽດບຽນ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ບໍ່ມີຄວາມບຽດບຽນກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ບໍ່ມີຄວາມບຽດບຽນ ເປັນສຸກໂດຍສ່ວນດຽວຄືພວກເທວະດາ[໑]ຊັ້ນສຸພະກິນຫະ ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ປຸງແຕ່ງວະຈີສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ແລະປຸງແຕ່ງມະໂນສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາຖືກຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ກະທົບເຂົ້າຍ່ອມສະເຫວີຍ ເວທະນາທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ມີສຸກແລະທຸກຜະສົມກັນຄືມະນຸດ ເທວະດາລາງພວກ[໒] ແລະວິນິປາຕິກະ[໓]ລາງພວກ ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳ ແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ບັນດາກຳເຫຼົ່ານັ້ນ ເຈຕະນາ[໑]ເພື່ອລະກຳດຳທີ່ມີວິບາກດຳ ເຈຕະນາເພື່ອລະກຳຂາວທີ່ມີວິບາກຂາວ ແລະເຈຕະນາເພື່ອລະກຳທັງດຳແລະຂາວທີ່ມີວິບາກທັງດຳແລະຂາວ ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

**ວິດຖາຣະສູດທີ ໔ ຈົບ**

## ໓. ໂສນະກາຍະນະສູດ

### ວ່າດ້ວຍມານົບຊື່ໂສນະກາຍະນະ

[໔໓໔] ຄັ້ງນັ້ນແລ ພາມຊື່ສິຂາໂມກຄັນລານະ[໒]ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຫຼາຍມື້ມາແລ້ວ ໂສນະກາຍະນະມານົບ[໓]ໄປຫາຂ້າພະເຈົ້າຮອດບ່ອນຢູ່ໄດ້ກ່າວວ່າ "ພຣະສະມະນະໂຄດົມຊົງບັນຍັດກຳທັງປວງວ່າເປັນອະກິຣິຍະ[໔] ກໍເມື່ອບັນຍັດກຳທັງປວງວ່າເປັນອະກິຣິຍະ ຊື່ວ່າກ່າວຄວາມຂາດສູນແຫ່ງໂລກ ຂ້າແດ່ພຣະໂຄດົມຜູ້ຈະເລີນ ໂລກນີ້ມີກຳເປັນສະພາບດຳລົງຢູ່ໄດ້ດ້ວຍການກໍ່ກຳບໍ່ແມ່ນບໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາບໍ່ຮູ້ສຶກວ່າໄດ້ເຫັນໂສນະກາຍະນະມານົບເລີຍ ເຫດໃດ ຈະໄດ້ກ່າວປາໄສແນວນີ້ບໍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ
໒. ກຳຂາວມີວິບາກຂາວ
໓. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານທີ່ມີຄວາມບຽດບຽນ ແລະປຸງແຕ່ງມະໂນສັງຂານທີ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນ ຜັດສະທີ່ມີຄວາມບຽດບຽນຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ມີຄວາມບຽດບຽນກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນ ເປັນທຸກໂດຍສ່ວນດຽວຄືພວກສັດນະຮົກ ນີ້ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານທີ່ບໍ່ມີຄວາມບຽດບຽນ ແລະປຸງແຕ່ງມະໂນສັງຂານທີ່ບໍ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນ ຜັດສະທີ່ບໍ່ມີຄວາມບຽດບຽນ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ບໍ່ມີຄວາມບຽດບຽນກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ບໍ່ມີຄວາມບຽດບຽນ ເປັນສຸກໂດຍສ່ວນດຽວຄືພວກເທວະດາຊັ້ນສຸພະກິນຫະ ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ປຸງແຕ່ງວະຈີສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ແລະປຸງແຕ່ງມະໂນສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາຖືກຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ມີສຸກແລະທຸກຜະສົມກັນຄືມະນຸດ ເທວະດາລາງພວກແລະວິນິປາຕິກະລາງພວກ ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳ ແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ບັນດາເຈຕະນາເຫຼົ່ານັ້ນ ເຈຕະນາເພື່ອລະກຳດຳທີ່ມີວິບາກດຳ ເຈຕະນາເພື່ອລະກຳຂາວທີ່ມີວິບາກຂາວ ແລະເຈຕະນາເພື່ອລະກຳທັງດຳແລະຂາວທີ່ມີວິບາກທັງດຳແລະຂາວ ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພາມ ກຳ ໔ ປະການນີ້ແລເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ"

**ໂສນະກາຍະນະສູດທີ ໓ ຈົບ**

# ໔. ປະຖົມສິກຂາປະທະສູດ

## ວ່າດ້ວຍສິກຂາບົດ ສູດທີ ໑

[໒໓໕] ພິກຂຸທັງຫຼາຍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ
໒. ກຳຂາວມີວິບາກຂາວ
໓. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ
໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ເປັນຜູ້ລັກຊັບ ເປັນຜູ້ປະພຶດຜິດໃນກາມ ເປັນຜູ້ເວົ້າຕົວະ ເປັນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້

ເວັ້ນຂາດຈາກເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຯລຯ[1] ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ບັນດາເຈຕະນາເຫຼົ່ານັ້ນ ເຈຕະນາເພື່ອລະກຳດຳ ທີ່ມີວິບາກດຳ ຯລຯ[1] ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງ ປະກາດໃຫ້ຜູ້ອື່ນຮູ້ນຳ

**ປະຖົມສິກຂາປະທະສູດທີ່ ໔ ຈົບ**

## ໕. ທຸຕິຍະສິກຂາປະທະສູດ

### ວ່າດ້ວຍສິກຂາບົດ ສູດທີ່ ໔

[໔໓໗] ພິກຂຸທັງຫຼາຍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ
໒. ກຳຂາວມີວິບາກຂາວ
໓. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ
໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າມານດາ ເປັນຜູ້ຂ້າບິດາ ເປັນຜູ້ຂ້າພຣະອະຣະຫັນ ມີຈິດປະທຸດສະຮ້າຍຕໍ່ພຣະຕະຖາຄົດຍັງພຣະໂລຫິດໃຫ້ຫໍ້ຂຶ້ນ ທຳລາຍສົງໃຫ້ແຕກກັນ ນີ້ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່ ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ມີຄວາມເຫັນຖືກ ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຯລຯ[๑] ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ບັນດາກຳເຫຼົ່ານັ້ນ ເຈຕະນາເພື່ອລະກຳດຳທີ່ມີວິບາກດຳ ຯລຯ[๑] ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

**ທຸຕິຍະສິກຂາປະທະສູດທີ ໕ ຈົບ**

## ໖. ອະຣິຍະມັກຄະສູດ

## ວ່າດ້ວຍອະຣິຍະມັກ

[໔໓໗] ພິກຂຸທັງຫຼາຍ ກຳ ໔ ປະການນີ້ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ

໒. ກຳຂາວມີວິບາກຂາວ

៣. ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນ ຯລຯ[๑] ນີ້ ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ຯລຯ[๑] ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຯລຯ[๑] ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ສຳມາທິດຖິ ຯລຯ ສຳມາສະມາທິ ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

**ອະຣິຍະມັກຄະສູດທີ ៧ ຈົບ**

# ໗. ໂພດຊັງຄະສູດ

## ວ່າດ້ວຍໂພດຊົງ

[໒៣໘] ພິກຂຸທັງຫຼາຍ ກຳ ໔ ປະການນີ້ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ
໒. ກຳຂາວມີວິບາກຂາວ
໓. ກຳທັງດຳແລະຂາວ ມີວິບາກທັງດຳແລະຂາວ
໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນ ຯລຯ ນີ້ຮຽກວ່າ ກຳດຳມີວິບາກດຳ

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ຯລຯ ນີ້ຮຽກວ່າ ກຳຂາວມີວິບາກຂາວ

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຯລຯ ນີ້ຮຽກວ່າ ກຳທັງດຳແລະຂາວມີວິບາກທັງດຳແລະຂາວ

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ ເປັນແນວໃດ?

ຄື ສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມຣະນຶກໄດ້) ທຳມະວິຈະຍະສຳ ໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມເຟັ້ນທຳ) ວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມພຽນ) ປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ ຄືຄວາມອິ່ມໃຈ) ປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມສະງົບກາຍລະງັບໃຈ) ສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມຕັ້ງຈິດໝັ້ນ) ອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມວາງໃຈເປັນກາງ) ນີ້ຮຽກວ່າ ກຳ ທັງບໍ່ດຳແລະບໍ່ຂາວ ມີວິບາກ ທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດສິ້ນກຳ

ພິກຂຸທັງຫຼາຍ ກຳ ໔ ປະການນີ້ແລເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ

**ໂພດຊັງຄະສູດທີ ໗ ຈົບ**

# ໗. ສາວັດຊະສູດ

### ວ່າດ້ວຍກຳແລະທິດຖິທີ່ມີໂທດ

[໒໓໙] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ມີໂທດ
໒. ວະຈີກຳທີ່ມີໂທດ
໓. ມະໂນກຳທີ່ມີໂທດ
໔. ທິດຖິທີ່ມີໂທດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ບໍ່ມີໂທດ
໒. ວະຈີກຳທີ່ບໍ່ມີໂທດ
໓. ມະໂນກຳທີ່ບໍ່ມີໂທດ
໔. ທິດຖິທີ່ບໍ່ມີໂທດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ສາວັດຊະສູດທີ ໗ ຈົບ**

# ໘. ອັບພະຍາປັດຊະສູດ

## ວ່າດ້ວຍກຳແລະທິດຖິທີ່ບໍ່ມີຄວາມບຽດບຽນ

[໒໔໐] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ມີຄວາມບຽດບຽນ
໒. ວະຈີກຳທີ່ມີຄວາມບຽດບຽນ
໓. ມະໂນກຳທີ່ມີຄວາມບຽດບຽນ
໔. ທິດຖິທີ່ມີຄວາມບຽດບຽນ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ ໃນນະຮົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ບໍ່ມີຄວາມບຽດບຽນ
໒. ວະຈີກຳທີ່ບໍ່ມີຄວາມບຽດບຽນ
໓. ມະໂນກຳທີ່ບໍ່ມີຄວາມບຽດບຽນ
໔. ທິດຖິທີ່ບໍ່ມີຄວາມບຽດບຽນ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອັບພະຍາປັດຊະສູດທີ ៩ ຈົບ**

## ໑໐. ສະມະນະສູດ

## ວ່າດ້ວຍສະມະນະ

[໒໔໑] ພິກຂຸທັງຫຼາຍ ສະມະນະທີ ໑ ສະມະນະທີ ໒ ສະມະນະທີ ໓ ແລະສະມະນະທີ ໔ ມີ ໃນທຳວິໄນນີ້ທີ່ນັ້ນ ລັດທິອື່ນ[១]ວ່າງຈາກສະມະນະທັງ ໔ ທ່ານທັງຫຼາຍຈົ່ງບັນລືສີຫະນາດ[២] ໂດຍຖືກຕ້ອງເທີ້ນ

ສະມະນະທີ ໑ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປຈຶ່ງເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[៣]ໃນມື້ທາງໜ້າ ນີ້ເປັນສະມະນະທີ ໑

ສະມະນະທີ ໒ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປແລະຍ້ອນຣາຄະ ໂທສະ ໂມຫະເບົາບາງ ຈຶ່ງເປັນພຣະສະກະທາຄາມີ ມາສູ່ໂລກນີ້ເທື່ອດຽວທີ່ນັ້ນກໍຈະເຮັດບ່ອນສຸດແຫ່ງ

ທຸກໄດ້ ນີ້ເປັນສະມະນະທີ ໒

ສະມະນະທີ ໓ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ຈຶ່ງເປັນໂອປະປາຕິກະ[๖] ປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນຢ່າງແນ່ນອນ ນີ້ເປັນສະມະນະທີ ໓

ສະມະນະທີ ໔ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນສະມະນະທີ ໔

ພິກຂຸທັງຫຼາຍ ສະມະນະທີ ໑ ສະມະນະທີ ໒ ສະມະນະທີ ໓ ແລະສະມະນະທີ ໔ ມີໃນທຳວິໄນນີ້ ລັດທິອື່ນວ່າງຈາກສະມະນະທັງ ໔ ທ່ານທັງຫຼາຍຈົ່ງບັນລືສີຫະນາດໂດຍຖືກຕ້ອງເທີ້ນ

**ສະມະນະສູດທີ ໑໐ ຈົບ**

## ໑໑. ສັປປຸຣິສານິສັງສະສູດ

## ວ່າດ້ວຍອານິສົງທີ່ເພິ່ງໄດ້ຈາກສັດຕະບຸຣຸດ

[໒໔໒] ພິກຂຸທັງຫຼາຍ ບຸກຄົນອາໄສສັດຕະບຸຣຸດແລ້ວເພິ່ງຫວັງໄດ້ອານິສົງ ໔ ປະການ

ອານິສົງ ໔ ປະການ ອັນໃດແດ່ ຄື

໑. ຈະເລີນດ້ວຍອະຣິຍະສີນ
໒. ຈະເລີນດ້ວຍອະຣິຍະສະມາທິ
໓. ຈະເລີນດ້ວຍອະຣິຍະປັນຍາ
໔.ຈະເລີນດ້ວຍອະຣິຍະວິມຸດຕິ

ພິກຂຸທັງຫຼາຍ ບຸກຄົນອາໄສສັດຕະບຸຣຸດແລ້ວເພິ່ງຫວັງໄດ້ອານິສົງ ໔ ປະການນີ້

**ສັປປຸຣິສານິສັງສະສູດທີ ໑໑ ຈົບ**

**ກຳມະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ສັງຂິດຕະສູດ
໒. ໂສນະກາຍະນະສູດ
໓. ທຸຕິຍະສິກຂາປະທະສູດ
໔. ໂພດຊັງຄະສູດ
໕. ອັບພະຍາປັດຊະສູດ
໖. ວິດຖາຣະສູດ
໗. ປະຖົມສິກຂາປະທະສູດ
໘. ອະຣິຍະມັກຄະສູດ
໙. ສາວັດຊະສູດ
໑໐. ສະມະນະສູດ
໑໑. ສັບປຸຣິສານິສັງສະສູດ


# ໕. ອາປັດຕິພະຍະວະວັກ

## ໝວດວ່າດ້ວຍອາປັດຕິໄພ

## ໑. ສັງຄະເພທະກະສູດ

### ວ່າດ້ວຍພິກຂຸຜູ້ທຳລາຍສົງ

[໔໕໒] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະອານົນດັ່ງນີ້ວ່າ "ອານົນ ອະທິກອນ°ລະງັບແລ້ວບໍ?"

ທ່ານພຣະອານົນທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອະທິກອນນັ້ນຈະລະງັບໄດ້ບ່ອນໃດ ສັດທິວິຫາຣິກຊື່ວ່າພາທິຍະຂອງທ່ານພຣະອະນຸຣຸດທະມຸ້ງຈະທຳລາຍສົງຝ່າຍດຽວ ເມື່ອພຣະພາທິຍະຍັງຍັ້ງຢືນຢູ່ແນວນັ້ນ ທ່ານພຣະອະນຸຣຸດທະກໍຍັງບໍ່ເວົ້າອັນໃດຈັກຄຳດຽວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເມື່ອໃດ ອະນຸຣຸດທະຈະຈັດການຊຳຣະອະທິກອນໃນທ່າມກາງສົງ ອະທິກອນໃດກໍຕາມທີ່ເກີດຂຶ້ນ ທ່ານທັງຫຼາຍກັບສາຣີບຸດ ແລະໂມກຄັນລານະ ຈະຕ້ອງຊຳຣະອະທິກອນທັງໝົດນັ້ນໃຫ້ລະງັບໄປບໍ່ແມ່ນບໍ?

ອານົນ ພິກຂຸຜູ້ຊົ່ວຊາມເມື່ອເລັງເຫັນອຳນາດປະໂຫຍດ ໕ ປະການນີ້ ຈຶ່ງຍິນດີ ການທຳລາຍສົງ

ອຳນາດປະໂຫຍດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ຊົ່ວຊາມໃນທຳວິໄນນີ້ເປັນຄົນທຸສິນ[໒] ມີທຳຊົ່ວຊາມ ບໍ່ສະອາດ[໓] ມີຄວາມປະ ພຶດທີ່ ໜ້າລັງກຽດ ມີການງານປົກປິດ ບໍ່ແມ່ນສະມະນະແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີແຕ່ປະຕິຍານວ່າເປັນພົມມະຈາຣີ[໑] ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ[໒] ທ່ານຄິດກັງວົນແນວນີ້ວ່າ "ຖ້າພວກພິກຂຸຈັກຮູ້ວ່າ ເຮົາເປັນຄົນທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດໜ້າລັງກຽດ ມີການງານປົກປິດ ບໍ່ແມ່ນສະມະນະແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນຊຸ່ມດ້ວຍຣາຄະ ເປັນຄືຂີ້ ເຫຍື່ອ ຈັກພ້ອມໃຈກັນທຳລາຍເຮົາສາ[໓] ແຕ່ຖ້າແຕກແຍກກັນ ຈັກທຳລາຍເຮົາບໍ່ໄດ້" ພິກຂຸຜູ້ຊົ່ວຊາມເມື່ອເລັງເຫັນອຳນາດປະໂຫຍດທີ ໑ ນີ້ຈຶ່ງຍິນດີການທຳລາຍສົງ

໒. ພິກຂຸຜູ້ຊົ່ວຊາມເປັນມິດສາທິດຖິ ປະກອບດ້ວຍອັນຕັກຄາຫິກະທິດຖິ[໔] ທ່ານຄິດກັງວົນແນວນີ້ວ່າ "ຖ້າພວກພິກຂຸຈັກຮູ້ວ່າ ເຮົາເປັນມິດສາທິດຖິ ປະກອບດ້ວຍອັນຕັກຄາຫິກະທິດຖິ ຈັກພ້ອມໃຈກັນທຳລາຍເຮົາສາ ແຕ່ຖ້າແຕກແຍກກັນ ຈັກທຳລາຍເຮົາບໍ່ໄດ້" ພິກຂຸຜູ້ຊົ່ວຊາມ ເມື່ອເລັງເຫັນອຳນາດປະໂຫຍດທີ ໒ ນີ້ ຈຶ່ງຍິນດີການທຳລາຍສົງ

໓. ພິກຂຸຜູ້ຊົ່ວຊາມເປັນຜູ້ມີມິດສາອາຊີວະ ລ້ຽງຊີວິດດ້ວຍມິດສາຊີບ ທ່ານຄິດກັງວົນແນວນີ້ວ່າ "ຖ້າພວກພິກຂຸຈັກຮູ້ວ່າ ເຮົາເປັນຜູ້ມີມິດສາອາຊີວະ ລ້ຽງຊີວິດດ້ວຍມິດສາຊີບ ຈັກພ້ອມໃຈກັນທຳລາຍເຮົາສາ ແຕ່ຖ້າແຕກແຍກກັນຈັກທຳລາຍເຮົາບໍ່ໄດ້" ພິກຂຸຜູ້ຊົ່ວຊາມເມື່ອເລັງເຫັນອຳນາດ ປະໂຫຍດທີ ໓ ນີ້ ຈຶ່ງຍິນດີການທຳລາຍສົງ

໔. ພິກຂຸຜູ້ຊົ່ວຊາມປາຖະໜາລາບສັກກາຣະແລະຊື່ສຽງ ທ່ານຄິດກັງວົນແນວນີ້ວ່າ "ຖ້າພວກພິກຂຸຈັກຮູ້ວ່າ ເຮົາປາຖະໜາລາບສັກກາຣະແລະຊື່ສຽງ ຈັກພ້ອມໃຈກັນບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາເຮົາ ແຕ່ຖ້າແຕກແຍກກັນຈັກສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ພິກຂຸຜູ້ຊົ່ວຊາມ ເມື່ອເລັງເຫັນອຳນາດປະໂຫຍດທີ ໔ ນີ້ ຈຶ່ງຍິນດີການທຳລາຍສົງ

ອານົນ ພິກຂຸຜູ້ຊົ່ວຊາມ ເມື່ອເລັງເຫັນອຳນາດປະໂຫຍດ ໔ ປະການນີ້ແລ ຈຶ່ງຍິນດີການທຳລາຍສົງ"

**ສັງຄະເພທະກະສູດທີ ໑ ຈົບ**

# ๘. ອາປັດຕິພະຍະສູດ

## ວ່າດ້ວຍອາປັດຕິໄພ

[๘๔๘] ພິກຂຸທັງຫຼາຍ ອາປັດຕິໄພ (ໄພທີ່ເກີດຈາກການຕ້ອງອາບັດ) ๔ ປະການນີ້

ອາປັດຕິໄພ ๔ ປະການ ອັນໃດແດ່ ຄື

๑. ພິກຂຸຫຼືພິກຂຸນີ ລາງອົງເຂົ້າໄປຕັ້ງສັນຍາໃນອາບັດປາຣາຊິກທັງຫຼາຍວ່າ ເປັນໄພຢ່າງແຮງກ້າ ການເຂົ້າໄປຕັ້ງສັນຍາຂອງພິກຂຸຫຼືພິກຂຸນີນັ້ນ ເພິ່ງຫວັງໄດ້ວ່າ "ຜູ້ຍັງບໍ່ຕ້ອງອາບັດປາຣາຊິກກໍຈັກບໍ່ຕ້ອງ ຫຼືຜູ້ຕ້ອງແລ້ວ ຈັກເຮັດຄືນຕາມສົມຄວນແກ່ທຳ" ປຽບຄືພວກຣາດຊະບຸຣຸດຈັບໂຈນຜູ້ປະພຶດຊົ່ວໄດ້ແລ້ວສະແດງແກ່ພຣະຣາຊາດ້ວຍຂາບທູນວ່າ "ຂໍເດຊະ ຊາຍຜູ້ນີ້ເປັນໂຈນຜູ້ປະພຶດຊົ່ວຕໍ່ພຣະອົງ ຂໍພຣະອົງຈົ່ງລົງພຣະຣາດຊະອາຍາແກ່ເຂົາ" ພຣະຣາຊາຈຶ່ງຮັບສັ່ງແບບນີ້ວ່າ "ທ່ານທັງຫຼາຍຈົ່ງໄປ ຈົ່ງໃຊ້ເຊືອກໜຽວມັດບຸຣຸດນີ້ເອົາແຂນໄຂວ້ຫຼັງຢ່າງແໜ້ນໜາແລ້ວແຖຜົມ ນຳຕະເວນໄປຕາມ ຖະໜົນແລະຮ່ອມພ້ອມກັບແກວ່ງບັນເດາະ ສຽງດັງເປັນຕາຢ້ານ ນຳອອກທາງປະຕູດ້ານທິດໃຕ້ແລ້ວຕັດຫົວທາງດ້ານທິດໃຕ້ແຫ່ງພຣະນະຄອນ" ພວກຣາດຊະບຸຣຸດໃຊ້ເຊືອກໜຽວມັດບຸຣຸດນັ້ນເອົາແຂນ ໄຂວ້ຫຼັງຢ່າງແໜ້ນໜາແລ້ວແຖຜົມ ນຳຕະເວນໄປຕາມຖະໜົນແລະຮ່ອມພ້ອມກັບແກວ່ງບັນເດາະ ສຽງດັງເປັນຕາຢ້ານ ນຳອອກທາງປະຕູດ້ານທິດໃຕ້ແລ້ວຕັດຫົວທາງດ້ານທິດໃຕ້ແຫ່ງພຣະນະຄອນ ໃນບ່ອນນັ້ນມີຊາຍຄົນໜຶ່ງຢືນຢູ່ບ່ອນທີ່ສົມຄວນ ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ຊາຍຜູ້ນີ້ ເຮັດກຳຊົ່ວ ໜ້າຕິຕຽນ ຈົນຕ້ອງຖືກຕັດຫົວ ພວກຣາດຊະບຸຣຸດຈຶ່ງຈັບ ໃຊ້ເຊືອກໜຽວມັດແຂນໄຂວ້ຫຼັງຢ່າງແໜ້ນໜາ ແຖຜົມ ນຳຕະເວນໄປຕາມຖະໜົນແລະຮ່ອມພ້ອມກັບ ແກວ່ງບັນເດາະສຽງດັງເປັນຕາຢ້ານ ນຳອອກທາງປະຕູດ້ານທິດໃຕ້ແລ້ວຕັດຫົວທາງດ້ານທິດໃຕ້ແຫ່ງພຣະນະຄອນ ເຂົາບໍ່ຄວນເຮັດກຳຊົ່ວຮ້າຍແບບນີ້ຈົນຕ້ອງຖືກຕັດຫົວເລີຍ"

๒. ພິກຂຸຫຼືພິກຂຸນີ ລາງອົງເຂົ້າໄປຕັ້ງສັນຍາໃນອາບັດສັງຄາທິເສດທັງຫຼາຍ ວ່າເປັນໄພຢ່າງແຮງກ້າ ການເຂົ້າໄປຕັ້ງສັນຍາຂອງພິກຂຸຫຼືພິກຂຸນີ ນັ້ນເພິ່ງຫວັງໄດ້ວ່າ "ຜູ້ຍັງບໍ່ຕ້ອງອາບັດສັງຄາທິເສດກໍຈັກບໍ່ຕ້ອງ ຫຼືຜູ້ ຕ້ອງແລ້ວຈັກເຮັດຄືນຕາມສົມຄວນແກ່ທຳ" ປຽບຄືຊາຍນຸ່ງຜ້າດຳສະຫຍາຍຜົມ ຫ້ອຍສາກໄວ້ທີ່ຄໍ ເຂົ້າໄປໃນກຸ່ມຊົນແລ້ວເພິ່ງກ່າວແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການຫ້ອຍສາກ ທ່ານທັງຫຼາຍພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດສິ່ງນັ້ນ" ໃນບ່ອນນັ້ນ ມີຊາຍຄົນໜຶ່ງຢືນຢູ່ບ່ອນທີ່ສົມຄວນ ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຊາຍຜູ້ນີ້ໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການຫ້ອຍສາກ ເຂົານຸ່ງຜ້າດຳ ສະຫຍາຍຜົມ ຫ້ອຍສາກໄວ້ທີ່ຄໍ ເຂົ້າໄປໃນກຸ່ມຊົນແລ້ວກ່າວ

ແບບນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າ ໄດ້ກະທຳກຳຊົ່ວ ໜ້າຕິຕຽນ ຄວນແກ່ການທ້ອຍສາກ ທ່ານທັງຫຼາຍ ພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດສິ່ງນັ້ນ ເຂົາບໍ່ຄວນເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການທ້ອຍສາກເຊັ່ນນັ້ນເລີຍ"

໓. ພິກຂຸຫຼືພິກຂຸນີ ລາງອົງເຂົ້າໄປຕັ້ງສັນຍາໃນອາບັດປາຈິດຕີທັງຫຼາຍວ່າ ເປັນໄພຢ່າງແຮງກ້າ ການເຂົ້າໄປຕັ້ງສັນຍາຂອງພິກຂຸຫຼືພິກຂຸນີນັ້ນ ເພິ່ງຫວັງໄດ້ວ່າ "ຜູ້ຍັງບໍ່ຕ້ອງອາບັດປາຈິດຕີກໍຈັກບໍ່ຕ້ອງ ຫຼືຜູ້ຕ້ອງແລ້ວຈັກເຮັດຄືນຕາມສົມຄວນແກ່ທຳ"" ປຽບຄືຊາຍຜູ້ນຸ່ງຜ້າດຳ ສະຫຍາຍຜົມ ຫ້ອຍທໍ່ຂີ້ມ້າໄວ້ທີ່ຄໍ ເຂົ້າໄປໃນກຸ່ມຊົນແລ້ວເພິ່ງກ່າວແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການ ຫ້ອຍທໍ່ຂີ້ມ້າ ທ່ານທັງຫຼາຍພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດ ສິ່ງນັ້ນ" ໃນບ່ອນນັ້ນ ມີຊາຍຄົນໜຶ່ງຢືນຢູ່ບ່ອນທີ່ສົມຄວນ ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຊາຍຜູ້ນີ້ໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການຫ້ອຍທໍ່ຂີ້ມ້າ ເຂົານຸ່ງຜ້າດຳ ສະຫຍາຍຜົມ ຫ້ອຍທໍ່ຂີ້ມ້າໄວ້ທີ່ຄໍ ເຂົ້າໄປໃນກຸ່ມຊົນແລ້ວກ່າວແບບນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າ ໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນແກ່ການຫ້ອຍທໍ່ຂີ້ມ້າ ທ່ານທັງຫຼາຍ ພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດສິ່ງນັ້ນ ເຂົາບໍ່ຄວນເຮັດກຳ

ຊົ່ວ ຄວນແກ່ການຫ້ອຍທໍ່ຂີ້ມ້າເຊັ່ນນັ້ນເລີຍ"

໔. ພິກຂຸຫຼືພິກຂຸນີ ລາງອົງເຂົ້າໄປຕັ້ງສັນຍາໃນອາບັດປະຕິເທສະນີຍະທັງຫຼາຍວ່າເປັນໄພ ຢ່າງແຮງກ້າ ການເຂົ້າໄປຕັ້ງສັນຍາຂອງພິກຂຸຫຼືພິກຂຸນີນັ້ນເພິ່ງຫວັງໄດ້ວ່າ "ຜູ້ຍັງບໍ່ຕ້ອງອາບັດປະຕິເທສະນີຍະກໍຈັກບໍ່ຕ້ອງ ຫຼື ຜູ້ຕ້ອງແລ້ວຈັກເຮັດຄືນຕາມສົມຄວນແກ່ທຳ"" ປຽບຄືຊາຍຜູ້ນຸ່ງຜ້າດຳ ສະຫຍາຍຜົມ ເຂົ້າໄປໃນກຸ່ມຊົນແລ້ວເພິ່ງກ່າວແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນຕຳໜິ ທ່ານທັງຫຼາຍພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດສິ່ງນັ້ນ" ໃນບ່ອນນັ້ນ ມີຊາຍຄົນໜຶ່ງຢືນຢູ່ບ່ອນທີ່ສົມຄວນກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ຊາຍຜູ້ນີ້ໄດ້ເຮັດກຳຊົ່ວ ໜ້າຕິຕຽນ ເຂົານຸ່ງຜ້າດຳ ສະຫຍາຍຜົມ ເຂົ້າໄປໃນກຸ່ມຊົນແລ້ວກ່າວແບບນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າໄດ້ເຮັດກຳຊົ່ວ ໜ້າຕິຕຽນ ຄວນຕຳໜິ ທ່ານທັງຫຼາຍພໍໃຈໃຫ້ຂ້າພະເຈົ້າເຮັດສິ່ງໃດ ຂ້າພະເຈົ້າຈະເຮັດສິ່ງນັ້ນ ເຂົາບໍ່ຄວນເຮັດກຳຊົ່ວ ໜ້າຕິຕຽນ ຄວນຕຳໜິເຊັ່ນນັ້ນເລີຍ"

ພິກຂຸທັງຫຼາຍ ອາບັດຕິໄພ ໔ ປະການນີ້ແລ

**ອາປັດຕິພະຍະສູດທີ ໘ ຈົບ**

# ໑. ສິກຂານິສັງສະສູດ

## ວ່າດ້ວຍພົມມະຈັນມີສິກຂາເປັນອານິສົງ

[໔໔໕] ພິກຂຸທັງຫຼາຍ ເຮົາຢູ່ປະພຶດພົມມະຈັນນີ້ມີສິກຂາເປັນອານິສົງ ມີປັນຍາເປັນຍອດ ມີວິ ມຸດຕິເປັນແກ່ນ ມີສະຕິເປັນອະທິປະໄຕ

ພົມມະຈັນມີສິກຂາເປັນອານິສົງ ເປັນແນວໃດ?

ຄື ອະພິສະມາຈາຣິກະສິກຂາ[1] ເຮົາບັນຍັດແກ່ສາວົກທັງຫຼາຍໃນທຳວິໄນນີ້ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນຂອງຄົນທີ່ເຫຼື້ອມໃສແລ້ວ ອະພິສະມາຈາຣິກະສິກຂາເຮົາບັນຍັດແລ້ວແກ່ສາວົກເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນຂອງຄົນທີ່ເຫຼື້ອມໃສແລ້ວດ້ວຍໂດຍວິທີໃດໆ ສາວົກນັ້ນບໍ່ເຮັດສິກຂານັ້ນ ໃຫ້ຂາດ ບໍ່ໃຫ້ຊອດ ບໍ່ໃຫ້ດ່າງ ບໍ່ໃຫ້ພ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍໂດຍວິທີນັ້ນ ໆ

ອີກແນວໜຶ່ງ ອາທິພົມມະຈະຣິຍະກະສິກຂາ໑ເຮົາບັນຍັດແກ່ສາວົກທັງຫຼາຍເພື່ອຄວາມສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການ ອາທິພົມມະຈະຣິຍະກະສິກຂາເຮົາບັນຍັດແລ້ວແກ່ສາວົກທັງຫຼາຍເພື່ອຄວາມໝົດສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການໂດຍວິທີໃດໆ ສາວົກນັ້ນບໍ່ເຮັດ ສິກຂານັ້ນໃຫ້ຂາດ ບໍ່ໃຫ້ຊອດ ບໍ່ໃຫ້ດ່າງ ບໍ່ໃຫ້ພ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍໂດຍວິທີນັ້ນ ໆ ພົມມະຈັນມີສິກຂາເປັນອານິສົງ ເປັນແນວນີ້ແລ

ພົມມະຈັນມີປັນຍາເປັນຍອດ ເປັນແນວໃດ?

ຄື ທຳທັງຫຼາຍ[6]ເຮົາສະແດງແລ້ວແກ່ສາວົກທັງຫຼາຍໃນທຳວິໄນນີ້ເພື່ອຄວາມໝົດສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການ ທຳທັງຫຼາຍເຮົາສະແດງແລ້ວແກ່ສາວົກທັງຫຼາຍເພື່ອຄວາມໝົດສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການໂດຍວິທີໃດ ໆ ທຳທັງຫຼາຍນັ້ນສາວົກພິຈາລະນາດ້ວຍປັນຍາໂດຍວິທີນັ້ນ ໆ ພົມມະຈັນມີປັນຍາເປັນຍອດ ເປັນແນວນີ້ແລ

ພົມມະຈັນມີວິມຸດຕິເປັນແກ່ນ ເປັນແນວໃດ?

ຄື ທຳທັງຫຼາຍເຮົາສະແດງແກ່ສາວົກທັງຫຼາຍໃນທຳວິໄນນີ້ເພື່ອຄວາມໝົດສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການ ທຳທັງຫຼາຍເຮົາສະແດງແລ້ວແກ່ສາວົກທັງຫຼາຍ ເພື່ອຄວາມສິ້ນໄປແຫ່ງທຸກໂດຍຖືກຕ້ອງທຸກປະການໂດຍວິທີໃດ ໆ ທຳທັງຫຼາຍນັ້ນເປັນທຳອັນວິມຸດຕິ ຖືກຕ້ອງແລ້ວໂດຍວິທີນັ້ນ ໆ ພົມມະຈັນມີວິມຸດຕິເປັນແກ່ນ ເປັນແນວນີ້ແລ

ພິມມະຈັນມີສະຕິເປັນອະທິປະໄຕ ເປັນແນວໃດ?

ຄື ສະຕິພິກຂຸຕັ້ງໄວ້ດີພາຍໃນວ່າ "ເຮົາຈັກພ່ຳເພັງອະພິສະມາຈາຣິກະສິກຂາທີ່ຍັງບໍ່ບໍລິບູນ ໃຫ້ບໍລິບູນ ຫຼືຈັກອະນຸເຄາະອະພິສະມາຈາຣິກະສິກຂາທີ່ບໍລິບູນແລ້ວດ້ວຍປັນຍາໃນຖານະນັ້ນ ໆ" ແດ່ ສະຕິທີ່ພິກຂຸຕັ້ງໄວ້ດີພາຍໃນວ່າ "ເຮົາຈັກພ່ຳເພັງອາທິພົມມະຈະຣິຍະກະສິກຂາທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ຫຼືຈັກອະນຸເຄາະອາທິພົມມະຈະຣິຍະກະສິກຂາທີ່ບໍລິບູນແລ້ວດ້ວຍປັນຍາໃນຖານະນັ້ນ ໆ" ແດ່ ສະຕິທີ່ພິກຂຸຕັ້ງໄວ້ດີພາຍໃນວ່າ "ເຮົາຈັກພິຈາລະນາທຳທີ່ເຮົາບໍ່ໄດ້ພິຈາລະນາດ້ວຍປັນຍາ ຫຼືຈັກອະນຸເຄາະທຳທີ່ເຮົາພິຈາລະນາແລ້ວດ້ວຍປັນຍາໃນຖານະນັ້ນ ໆ" ແດ່ ສະຕິທີ່ພິກຂຸຕັ້ງໄວ້ດີພາຍໃນວ່າ "ເຮົາຈັກຖືກຕ້ອງທຳທີ່ເຮົາບໍ່ໄດ້ຖືກຕ້ອງ ດ້ວຍວິມຸດຕິ ຫຼືຈັກອະນຸເຄາະທຳທີ່ເຮົາຖືກຕ້ອງແລ້ວດ້ວຍປັນຍາໃນຖານະນັ້ນ ໆ" ແດ່ ພົມມະຈັນມີສະຕິເປັນອະທິປະໄຕ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຂໍ້ທີ່ເຮົາກ່າວວ່າ "ເຮົາປະພຶດພົມມະຈັນມີສິກຂາເປັນອານິສົງ ມີປັນຍາເປັນຍອດ ມີວິມຸດຕິເປັນແກ່ນ ມີສະຕິເປັນອະທິປະໄຕ" ເຮົາກ່າວຍ້ອນອາໄສເຫດນີ້

**ສິກຂານິສັງສະສູດທີ ໓ ຈົບ**

## ໔. ເສີຍຍາສູດ

## ວ່າດ້ວຍການນອນ

[໔໔໖] ພິກຂຸທັງຫຼາຍ ການນອນ ໔ ປະການນີ້

ການນອນ ໔ ປະການ ອັນໃດແດ່ ຄື

໑. ນອນຄືຄົນຕາຍ[១]
໒. ນອນຄືຄົນບໍຣິໂພກກາມ
໓. ນອນຄືຣາດຊະສີ
໔. ນອນຄືຕະຖາຄົດ

ນອນຄືຄົນຕາຍ ເປັນແນວໃດ?
ຄື ສ່ວນຫຼາຍຄົນຕາຍນອນຫງາຍ ນີ້ຮຽກວ່າ ນອນຄືຄົນຕາຍ

ນອນຄືຄົນບໍຣິໂພກກາມ ເປັນແນວໃດ?
ຄື ສ່ວນຫຼາຍຄົນບໍຣິໂພກກາມ ຍ່ອມນອນສະແຄງຊ້າຍ ນີ້ຮຽກວ່າ ນອນຄືຄົນບໍຣິໂພກກາມ

ນອນຄືຣາດຊະສີ ເປັນແນວໃດ?

ຄື ພະຍາธາດຊະສີຍ່ອມສຳເລັດການນອນສະແດງຂວາ ຊ້ອນຕີນເຫຼື່ອມຕີນ ສອດຫາງເຂົ້າໃນລະຫວ່າງກົກຂາ ມັນຕື່ນຂຶ້ນຍືດກາຍສ່ວນໜ້າແລ້ວຫຼຽວເບິ່ງກາຍສ່ວນຫຼັງ ຖ້າມັນເຫັນກາຍຜິດແປກບໍປົກກະຕິແນວໃດໄປ ມັນຍ່ອມເສຍໃຈດ້ວຍເຫດນັ້ນ ແຕ່ຖ້າບໍ່ເຫັນ ອັນໃດຜິດປົກກະຕິ ມັນຍ່ອມດີໃຈ ນີ້ຮຽກວ່າ ນອນຄືธາດຊະສີ

ນອນຄືຕະຖາຄົດ ເປັນແນວໃດ?

ຄື ຕະຖາຄົດໃນທຳວິໄນນີ້ສະຫງັດຈາກກາມ ຯລຯ[১] ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ນອນຄືຕະຖາຄົດ

ພິກຂຸທັງຫຼາຍ ການນອນ ໔ ປະການນີ້ແລ

**ເສີຍຍາສູດທີ ໔ ຈົບ**

## ໕. ຖູປາຣະຫະສູດ

## ວ່າດ້ວຍຖູປາຣະຫະບຸກຄົນ

[໒໔໗] ພິກຂຸທັງຫຼາຍ ຖູປາຣະຫະບຸກຄົນ[໒] ໔ ຈຳພວກນີ້

ຖູປາຣະຫະບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ເປັນຖູປາຣະຫະບຸກຄົນ
໒. ພຣະປັດເຈກພຸດທະເຈົ້າ ເປັນຖູປາຣະຫະບຸກຄົນ
໓. ສາວົກຂອງພຣະຕະຖາຄົດ ເປັນຖູປາຣະຫະບຸກຄົນ
໔. ພຣະເຈົ້າຈັກກະພັດ ເປັນຖູປາຣະຫະບຸກຄົນ

ພິກຂຸທັງຫຼາຍ ຖູປາຣະຫະບຸກຄົນ ໔ ຈຳພວກນີ້ແລ

**ຖູປາຣະຫະສູດທີ ໕ ຈົບ**

## ໖. ປັນຍາວຸດທິສູດ

## ວ່າດ້ວຍຄວາມຈະເລີນດ້ວຍປັນຍາ

[໒໔໘] ພິກຂຸທັງຫຼາຍ ທຳ ໔ ປະການຍ່ອມເປັນໄປເພື່ອຄວາມຈະເລີນດ້ວຍປັນຍາ

ທຳ ໔ ປະການ[3] ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ (ການຄົບຫາສັດຕະບຸຣຸດ)
໒. ສັດທຳມັດສະວະນະ (ການຟັງສັດທຳ)
໓. ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ)
໔. ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ)

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລຍ່ອມເປັນໄປເພື່ອຄວາມຈະເລີນດ້ວຍປັນຍາ

**ປັນຍາວຸດທິສູດທີ ໕ ຈົບ**

## ໗. ພະຫຸກາຣະສູດ

## ວ່າດ້ວຍທຳມີອຸປະກາຣະຫຼາຍ

[໒໔໗] ພິກຂຸທັງຫຼາຍ ທຳ ໔ ປະການຍ່ອມມີອຸປະກາຣະຫຼາຍແກ່ມະນຸດ

ທຳ ໔ ປະການ ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ
໒. ສັດທຳມັດສະວະນະ
໓. ໂຍນິໂສມະນະສິການ
໔. ທຳມານຸທຳມະປະຕິປັດຕິ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລຍ່ອມມີອຸປະກາຣະຫຼາຍແກ່ມະນຸດ

**ພະຫຸກາຣະສູດທີ ໗ ຈົບ**

## ໘. ປະຖົມໂວຫາຣະສູດ[1]

## ວ່າດ້ວຍໂວຫານ ສູດທີ ໑

[໒໕໐] ພິກຂຸທັງຫຼາຍ ອະນະຣິຍະໂວຫານ[2] ໔ ປະການນີ້

ອະນະຣິຍະໂວຫານ ໔ ປະການ ອັນໃດແດ່ ຄື

໑. ການກ່າວສິ່ງທີ່ບໍ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ບໍ່ໄດ້ຟັງວ່າໄດ້ຟັງ

๓. ການກ່າວສິ່ງທີ່ບໍ່ໄດ້ຊາບວ່າໄດ້ຊາບ
๔. ການກ່າວສິ່ງທີ່ບໍ່ໄດ້ຮູ້ວ່າໄດ້ຮູ້

ພິກຂຸທັງຫຼາຍ ອະນະຣິຍະໂວຫານ ๔ ປະການນີ້ແລ

**ປະຖົມໂວຫາຣະສູດທີ ๗ ຈົບ**

## ๙. ທຸຕິຍະໂວຫາຣະສູດ[๑]

## ວ່າດ້ວຍໂວຫານ ສູດທີ ๒

[๔๕๑] ພິກຂຸທັງຫຼາຍ ອະຣິຍະໂວຫານ ๔ ປະການນີ້

ອະຣິຍະໂວຫານ ๔ ປະການ ອັນໃດແດ່ ຄື

๑. ການກ່າວສິ່ງທີ່ບໍ່ໄດ້ເຫັນວ່າບໍ່ໄດ້ເຫັນ
๒. ການກ່າວສິ່ງທີ່ບໍ່ໄດ້ຟັງວ່າບໍ່ໄດ້ຟັງ
๓. ການກ່າວສິ່ງທີ່ບໍ່ໄດ້ຊາບວ່າບໍ່ໄດ້ຊາບ
๔. ການກ່າວສິ່ງທີ່ບໍ່ໄດ້ຮູ້ວ່າບໍ່ໄດ້ຮູ້

ພິກຂຸທັງຫຼາຍ ອະຣິຍະໂວຫານ ๔ ປະການນີ້ແລ

**ທຸຕິຍະໂວຫາຣະສູດທີ ๙ ຈົບ**

## ๑๐. ຕະຕິຍະໂວຫາຣະສູດ[๒]

## ວ່າດ້ວຍໂວຫານ ສູດທີ ๓

[๔๕๒] ພິກຂຸທັງຫຼາຍ ອະນະຣິຍະໂວຫານ ๔ ປະການນີ້

ອະນະຣິຍະໂວຫານ ๔ ປະການ ອັນໃດແດ່ ຄື

๑. ການກ່າວສິ່ງທີ່ໄດ້ເຫັນວ່າບໍ່ໄດ້ເຫັນ
๒. ການກ່າວສິ່ງທີ່ໄດ້ຟັງວ່າບໍ່ໄດ້ຟັງ
๓. ການກ່າວສິ່ງທີ່ໄດ້ຊາບວ່າບໍ່ໄດ້ຊາບ
๔. ການກ່າວສິ່ງທີ່ໄດ້ຮູ້ວ່າບໍ່ໄດ້ຮູ້

ພິກຂຸທັງຫຼາຍ ອະນະຣິຍະໂວຫານ ໔ ປະການນີ້ແລ

**ຕະຕິຍະໂວຫາຣະສູດທີ ໑໐ ຈົບ**

## ໑໑. ຈະຕຸດຖະໂວຫາຣະສູດ[1]

### ວ່າດ້ວຍໂວຫານ ສູດທີ ໔

[໔໕໓] ພິກຂຸທັງຫຼາຍ ອະຣິຍະໂວຫານ ໔ ປະການນີ້

ອະຣິຍະໂວຫານ ໔ ປະການ ອັນໃດແດ່ ຄື

໑. ການກ່າວສິ່ງທີ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ໄດ້ຟັງວ່າໄດ້ຟັງ
໓. ການກ່າວສິ່ງທີ່ໄດ້ຊາບວ່າໄດ້ຊາບ
໔. ການກ່າວສິ່ງທີ່ໄດ້ຮູ້ວ່າໄດ້ຮູ້

ພິກຂຸທັງຫຼາຍ ອະຣິຍະໂວຫານ ໔ ປະການນີ້ແລ

**ຈະຕຸດຖະໂວຫານທີ ໑໑ ຈົບ**

**ອາປັດຕິພະຍະວະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສັງຄະເພທະກະສູດ
໒. ອາປັດຕິພະຍະສູດ
໓. ສິກຂານິສັງສະສູດ
໔. ເສີຍຍາສູດ
໕. ຖູປາຣະຫະສູດ
໖. ປັນຍາວຸດທິສູດ
໗. ພະຫຸກາຣະສູດ
໘. ປະຖົມໂວຫາຣະສູດ
໙. ທຸຕິຍະໂວຫາຣະສູດ
໑໐. ຕະຕິຍະໂວຫາຣະສູດ
໑໑. ຈະຕຸດຖະໂວຫາຣະສູດ

**ປັນຈະມະປັນນາດ ຈົບບໍລິບູນ**

# ໓. ອະພິນຍາວັກ

## ໝວດວ່າດ້ວຍທຳທີ່ຮູ້ຍິ່ງ

## ໑. ອະພິນຍາສູດ

## ວ່າດ້ວຍທຳທີ່ຮູ້ຍິ່ງ

[໔໕໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໔ ປະການນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນກຳນົດຮູ້ກໍມີ
໒. ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນລະກໍມີ
໓. ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນໃຫ້ຈະເລີນກໍມີ
໔. ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງກໍມີ

ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນກຳນົດຮູ້ ເປັນແນວໃດ?

ຄື ອຸປາທານຂັນ ໕ ນີ້ຮຽກວ່າ ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນກຳນົດຮູ້

ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ ເປັນແນວໃດ?
ຄື ອະວິດຊາແລະພະວະຕັນຫາ ນີ້ຮຽກວ່າ ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ

ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນໃຫ້ຈະເລີນ ເປັນແນວໃດ?
ຄື ສະມະຖະແລະວິປັດສະນາ[๑] ນີ້ຮຽກວ່າ ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນໃຫ້ຈະເລີນ

ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ ເປັນແນວໃດ?
ຄື ວິດຊາແລະວິມຸດຕິ ນີ້ຮຽກວ່າ ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລ

**ອະພິນຍາສູດທີ ໔ ຈົບ**

# ໘. ປະຣິເຍສະນາສູດ

## ວ່າດ້ວຍການສະແຫວງຫາ

[໔໕໕] ພິກຂຸທັງຫຼາຍ ອະນະຣິຍະປະຣິເຍສະນາ[๑] ໔ ປະການນີ້

ອະນະຣິຍະປະຣິເຍສະນາ ໔ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ຕົນເອງເປັນຜູ້ມີຄວາມແກ່ເປັນທຳມະດາ ຍ່ອມສະແຫວງຫາແຕ່ສິ່ງທີ່ມີຄວາມແກ່ເປັນທຳມະດາ
໒. ຕົນເອງເປັນຜູ້ມີຄວາມເຈັບໄຂ້ເປັນທຳມະດາຍ່ອມສະແຫວງຫາແຕ່ສິ່ງທີ່ມີຄວາມ ເຈັບໄຂ້ເປັນທຳມະດາ
໓. ຕົນເອງເປັນຜູ້ມີຄວາມຕາຍເປັນທຳມະດາ ຍ່ອມສະແຫວງຫາແຕ່ສິ່ງທີ່ມີຄວາມຕາຍເປັນທຳມະດາ
໔. ຕົນເອງເປັນຜູ້ມີຄວາມເສົ້າໝອງເປັນທຳມະດາຍ່ອມສະແຫວງຫາແຕ່ສິ່ງທີ່ມີຄວາມເສົ້າ ໝອງເປັນທຳມະດາ

ພິກຂຸທັງຫຼາຍ ອະນະຣິຍະປະຣິເຍສະນາ ໔ ປະການນີ້ແລ

ພິກຂຸທັງຫຼາຍ ອະຣິຍະປະຣິເຍສະນາ ໔ ປະການນີ້

ອະຣິຍະປະຣິເຍສະນາ ໔ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ຕົນເອງເປັນຜູ້ມີຄວາມແກ່ເປັນທຳມະດາ ຮູ້ໂທດໃນສິ່ງທີ່ມີຄວາມແກ່ເປັນທຳມະດາແລ້ວຍ່ອມສະແຫວງຫານິບພານອັນບໍ່ມີຄວາມແກ່ເຊິ່ງເປັນແດນກະເສມຈາກໂຍຄະທີ່ຍອດຢ້ຽມ
໒. ຕົນເອງເປັນຜູ້ມີຄວາມເຈັບໄຂ້ເປັນທຳມະດາ ຮູ້ໂທດໃນສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາແລ້ວຍ່ອມສະແຫວງຫານິບພານອັນບໍ່ມີຄວາມເຈັບໄຂ້ເຊິ່ງເປັນແດນກະເສມຈາກໂຍຄະທີ່ຍອດຢ້ຽມ

໓. ຕົນເອງເປັນຜູ້ມີຄວາມຕາຍເປັນທຳມະດາ ຮູ້ໂທດໃນສິ່ງທີ່ມີຄວາມຕາຍເປັນທຳມະດາແລ້ວຍ່ອມສະແຫວງຫານິບພານອັນບໍ່ມີຄວາມຕາຍເຊິ່ງເປັນແດນກະເສມຈາກໂຍຄະທີ່ຍອດຢ້ຽມ
໔. ຕົນເອງເປັນຜູ້ມີຄວາມເສົ້າໝອງເປັນທຳມະດາ ຮູ້ໂທດໃນສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາແລ້ວຍ່ອມສະແຫວງຫານິບພານ ອັນບໍ່ມີຄວາມເສົ້າໝອງເຊິ່ງເປັນແດນກະເສມຈາກໂຍຄະທີ່ຍອດຢ້ຽມ

ພິກຂຸທັງຫຼາຍ ອະຣິຍະປະຣິເຍສະນາ ໔ ປະການນີ້ແລ

**ປະຣິເຍສະນາສູດທີ ໒ ຈົບ**

## ໓. ສັງຄະຫະວັດຖຸສູດ

## ວ່າດ້ວຍສັງຄະຫະວັດຖຸ

[໒໕໖] ພິກຂຸທັງຫຼາຍ ສັງຄະຫະວັດຖຸ (ທຳເຄື່ອງຢຶດໜ່ຽວ) ໔ ປະການນີ້

ສັງຄະຫະວັດຖຸ ໔ ປະການ ອັນໃດແດ່ ຄື

໑. ທານ (ການໃຫ້)
໒. ເປີຍຍະວັດຊະ (ວາຈາເປັນທີ່ຮັກ)
໓. ອັດຖະຈະຣິຍາ (ການປະພຶດປະໂຫຍດ)
໔. ສະມານັດຕະຕາ (ການວາງຕົນສະໝ່ຳສະເໝີ)

ພິກຂຸທັງຫຼາຍ ສັງຄະຫະວັດຖຸ ໔ ປະການນີ້ແລ

**ສັງຄະຫະວັດຖຸສູດທີ ໓ ຈົບ**

## ໔. ມາລຸງກະຍະປຸດຕະສູດ

## ວ່າດ້ວຍພຣະມາລຸງກະຍະບຸດ

[໒໕໗] ຄັ້ງນັ້ນແລ ທ່ານພຣະມາລຸງກະຍະບຸດເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ແກ່ຂ້າພຣະອົງ ເຊິ່ງຂ້າພຣະອົງໄດ້ຟັງແລ້ວເພິ່ງຫຼີກອອກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມາລຸງກະຍະບຸດ ບັດນີ້ເຮົາຈະກ່າວກັບພວກພິກຂຸໜຸ່ມແນວໃດ ໃນເມື່ອທ່ານເປັນຄົນແກ່ເຖົ້າ ເປັນຜູ້ໃຫຍ່ ຂໍຟັງໂອວາດຂອງຕະຖາຄົດໂດຍຫຍໍ້"

ພຣະມາລຸງກະຍະບຸດຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ແກ່ຂ້າພຣະອົງ ຂໍພຣະສຸດຄົດເຈົ້າໂຜດສະແດງທຳໂດຍຫຍໍ້ ຂ້າພຣະອົງຈະເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າໄດ້ແດ່ ຂ້າພຣະອົງຈະເພິ່ງເປັນທາຍາດແຫ່ງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າໄດ້ແດ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມາລຸງກະຍະບຸດ ມີເຫດເກີດແຫ່ງຕັນຫາ ໔ ປະການນີ້ທີ່ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຂຶ້ນໄດ້

ມີເຫດເກີດແຫ່ງຕັນຫາ ໔ ປະການ ອັນໃດແດ່ ຄື

໑. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ຈີວອນເປັນເຫດ
໒. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ບິນທະບາດເປັນເຫດ
໓. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ເສນາສະນະເປັນເຫດ
໔. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ປັດໄຈທີ່ດີແລະດີກວ່າ

ມາລຸງກະຍະບຸດ ມີເຫດເກີດແຫ່ງຕັນຫາ ໔ ປະການນີ້ແລ ທີ່ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຂຶ້ນໄດ້

ເມື່ອໃດແລ ພິກຂຸລະຕັນຫາໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸນີ້ເຮົາຮຽກວ່າ ຕັດຕັນຫາໄດ້ແລ້ວ ຖອນສັງໂຍດໄດ້ແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ແລ້ວ ຍ້ອນລະມານະໄດ້ໂດຍຖືກຕ້ອງ"

ລຳດັບນັ້ນແລ ທ່ານພຣະມາລຸງກະຍະບຸດອັນພຣະຜູ້ມີພຣະພາກເຈົ້າຊົງສອນດ້ວຍໂອວາດ ນີ້ແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ຕໍ່ມາ ທ່ານພຣະມາລຸງກະຍະບຸດຫຼີກອອກໄປ ຢູ່ຜູ້ດຽວ ບໍ່ຜະໝາດ໒ ມີຄວາມພຽນອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ໑ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດ ຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍ

ປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ຈຶ່ງເປັນອັນວ່າທ່ານພຣະມາລຸງກະຍະບຸດໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ມາລຸງກະຍະບຸດສູດທີ ໔ ຈົບ**

## ໕. ກຸລະສູດ

## ວ່າດ້ວຍຕະກູນ

[໒໕໗] ພິກຂຸທັງຫຼາຍ ຕະກູນໃດຕະກູນໜຶ່ງເຖິງຄວາມເປັນໃຫຍ່ໃນໂພຄະຊັບແລ້ວ ຍ່ອມດຳລົງຢູ່ໄດ້ບໍ່ດົນຍ້ອນເຫດ ໔ ປະການ ຫຼືເຫດໃດເຫດໜຶ່ງບັນດາເຫດ ໔ ປະການນັ້ນ

ເຫດ ໔ ປະການ ອັນໃດແດ່ ຄື

໑. ບໍ່ສະແຫວງຫາພັດສະດຸທີ່ຫາຍໄປ
໒. ບໍ່ຊ່ອມແຊມພັດສະດຸທີ່ເກົ່າຊຸດໂຊມ
໓. ບໍ່ຮູ້ຈັກປະມານໃນການບໍຣິໂພກ
໔. ຕັ້ງສະຕີຫຼືບຸຣຸດທຸສິນໃຫ້ເປັນໃຫຍ່ໃນເຮືອນ

ພິກຂຸທັງຫຼາຍ ຕະກູນໃດຕະກູນໜຶ່ງເຖິງຄວາມເປັນໃຫຍ່ໃນໂພຄະຊັບແລ້ວ ຍ່ອມດຳລົງຢູ່ໄດ້ບໍ່ດົນຍ້ອນເຫດ ໔ ປະການນີ້ ຫຼື ເຫດໃດເຫດໜຶ່ງບັນດາເຫດ ໔ ປະການນັ້ນ

ພິກຂຸທັງຫຼາຍ ຕະກູນໃດຕະກູນໜຶ່ງເຖິງຄວາມເປັນໃຫຍ່ໃນໂພຄະຊັບແລ້ວ ຍ່ອມດຳລົງຢູ່ໄດ້ດົນຍ້ອນເຫດ ໔ ປະການ ຫຼືເຫດໃດເຫດໜຶ່ງບັນດາເຫດ ໔ ປະການນັ້ນ

ເຫດ ໔ ປະການ ອັນໃດແດ່ ຄື

໑. ສະແຫວງຫາພັດສະດຸທີ່ຫາຍໄປ
໒. ຊ່ອມແຊມພັດສະດຸທີ່ເກົ່າຊຸດໂຊມ
໓. ຮູ້ຈັກປະມານໃນການບໍຣິໂພກ
໔. ຕັ້ງສະຕີຫຼືບຸຣຸດຜູ້ມີສິນໃຫ້ເປັນໃຫຍ່ໃນເຮືອນ

ພິກຂຸທັງຫຼາຍ ຕະກູນໃດຕະກູນໜຶ່ງເຖິງຄວາມເປັນໃຫຍ່ໃນໂພຄະຊັບແລ້ວ ຍ່ອມດຳລົງຢູ່ໄດ້ດົນຍ້ອນເຫດ ໔ ປະການນັ້ນ ຫຼື ເຫດໃດເຫດໜຶ່ງບັນດາເຫດ ໔ ປະການນັ້ນ

**ກຸລະສູດທີ ໕ ຈົບ**

# ໗. ປະຖົມອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນ ສູດທີ ໑

[໔໕໗] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໔ ປະການ ອັນໃດແດ່ ຄື
ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍເຊົາ (ແລ່ນໄວ)
໓. ສົມບູນດ້ວຍກຳລັງ
໔. ສົມບູນດ້ວຍຊວດຊົງ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການນີ້ແລ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການກໍຄືກັນສັນນັ້ນຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍເຊົາ
໓. ສົມບູນດ້ວຍກຳລັງ
໔. ສົມບູນດ້ວຍຊວດຊົງ

ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຜາຣົບຄວາມພຽນຢູ່ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍ ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍເຊົາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ພິກຂຸຜູ້ສົມບູນດ້ວຍເຊົາ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍຊວດຊົງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດຊະບໍຣິຂານ ພິກຂຸຜູ້ສົມບູນດ້ວຍຊວດຊົງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

**ປະຖົມອາຊານີຍະສູດທີ ໗ ຈົບ**

## ๘. ທຸຕິຍະອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນ ສູດທີ ๘

[๘๗໐] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໔ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍເຊົາ
๘. ສົມບູນດ້ວຍກຳລັງ
໔. ສົມບູນດ້ວຍຊວດຊົງ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາທີ່ປະກອບດ້ວຍອົງ ໔ ປະການ ນີ້ແລຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການກໍຄືກັນສັນນັ້ນຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ฯລฯ[1] ເປັນນາບຸນອັນປະເສີດຂອງໂລກ

ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

| | |
|---|---|
| ໑. ສົມບູນດ້ວຍວັນນະ | ໔. ສົມບູນດ້ວຍກຳລັງ |
| ໓. ສົມບູນດ້ວຍເຊົາ | ໔. ສົມບູນດ້ວຍຊວດຊົງ |

ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຜາຣົບຄວາມພຽນຢູ່ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍ ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍເຊົາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນ ອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸຜູ້ສົມບູນດ້ວຍເຊົາ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍຊວດຊົງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດ ຊະບໍຣິຂານ ພິກຂຸຜູ້ສົມບູນດ້ວຍຊວດຊົງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ທຸຕິຍະອາຊານີຍະສູດທີ ໗ ຈົບ**

## ໘. ພະລະສູດ

## ວ່າດ້ວຍພະລະ

[໔໗໑] ພິກຂຸທັງຫຼາຍ ພະລະ ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ວິຣິຍະພະລະ　　໒. ສະຕິພະລະ
໓. ສະມາທິພະລະ　　໔. ປັນຍາພະລະ

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ

**ພະລະສູດທີ ໗ ຈົບ**

## ໘. ອະຣັນຍະສູດ

## ວ່າດ້ວຍທຳຂອງພິກຂຸຜູ້ຄວນຢູ່ປ່າແລະບໍ່ຄວນຢູ່ປ່າ

[໔໘໒] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການ ບໍ່ຄວນອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບ[១]

ທຳ ໔ ປະການ ອັນໃດແດ່ ຄື ພິກຂຸ

໑. ປະກອບດ້ວຍກາມວິຕົກ (ຄວາມນຶກໃນທາງກາມ)
໒. ປະກອບດ້ວຍພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ)
໓. ປະກອບດ້ວຍວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ)
໔. ມີປັນຍາຊາມ ໂງ່ຈ້າ ເປັນຄົນປຶກ[២]

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ບໍ່ຄວນອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການ ຄວນອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂປ່ງແລະປ່າທຶບ

ທຳ ໔ ປະການ ອັນໃດແດ່ ຄື ພິກຂຸ

໑. ປະກອບດ້ວຍເນກຂຳມະວິຕົກ (ຄວາມນຶກປອດຈາກກາມ)
໒. ປະກອບດ້ວຍອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)
໓. ປະກອບດ້ວຍອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ)
໔. ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປຶກ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຄວນອາໄສເສນາສະນະ ອັນງຽບສະຫງັດຄືປ່າໂປ່ງ ແລະປ່າທຶບ

**ອະຣັນຍະສູດທີ ໙ ຈົບ**

## ໑໐. ກຳມະສູດ

## ວ່າດ້ວຍກຳແລະທິດຖິທີ່ມີໂທດ

[໔໖໓] ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍ ທຳ ໔ ປະການຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ມີໂທດ
໒. ວະຈີກຳທີ່ມີໂທດ
໓. ມະໂນກຳທີ່ມີໂທດ
໔. ທິດຖິທີ່ມີໂທດ

ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະປະສົບບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ບໍ່ມີໂທດ
໒. ວະຈີກຳທີ່ບໍ່ມີໂທດ
໓. ມະໂນກຳທີ່ບໍ່ມີໂທດ
໔. ທິດຖິທີ່ບໍ່ມີໂທດ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນແລະຍ່ອມປະສົບບຸນຫຼວງຫຼາຍ

**ກຳມະສູດທີ ໑໐ ຈົບ**

**ອະພິນຍາວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະພິນຍາສູດ
໒. ສັງຄະຫະວັດຖຸສູດ
໓. ກຸລະສູດ
໗. ທຸຕິຍະອາຊານີຍະສູດ
໙. ອະຣັນຍະສູດ
໔. ປະຣິເຍສະນາສູດ
໔. ມາລຸງກະຍະປຸດຕະສູດ
໖. ປະຖົມອາຊານີຍະສູດ
໘. ພະລະສູດ
໑໐. ກຳມະສູດ

# ໗. ກຳມະປະຖະວັກ

## ໝວດວ່າດ້ວຍກຳມະບົດ

## ໑. ປານາຕິປາຕີສູດ

### ວ່າດ້ວຍຜູ້ຂ້າສັດແລະຜູ້ເວັ້ນຂາດຈາກການຂ້າສັດ

[໔໖໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
໒. ເປັນຜູ້ພໍໃຈການຂ້າສັດ
໔. ຊັກຊວນຜູ້ອື່ນໃຫ້ຂ້າສັດ
໔. ກ່າວສັນເສີນການຂ້າສັດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນ ນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ
໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ
໒. ເປັນຜູ້ພໍໃຈການງົດເວັ້ນຈາກການຂ້າສັດ

໔. ກ່າວສັນເສີນການງົດເວັ້ນຈາກການຂ້າສັດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນ ສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປານາຕິປາຕີສູດທີ ໑ ຈົບ**

## ໔. ອະທິນນາທາຍີສູດ

## ວ່າດ້ວຍຜູ້ລັກຊັບແລະຜູ້ເວັ້ນຂາດຈາກການລັກຊັບ

[໔໒໕] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ລັກຊັບ
໒. ຊັກຊວນຜູ້ອື່ນໃຫ້ລັກຊັບ
໓. ເປັນຜູ້ພໍໃຈການລັກຊັບ
໔. ກ່າວສັນເສີນການລັກຊັບ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນ ນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການລັກຊັບ
໔. ກ່າວສັນເສີນການງົດເວັ້ນຈາກການລັກຊັບ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນ ສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະທິນນາທາຍີສູດທີ ໒ ຈົບ**

# ໓. ມິດສາຈາຣີສູດ

## ວ່າດ້ວຍຜູ້ປະພຶດຜິດໃນກາມແລະຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ

[໔໖໓] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນ ນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ປະພຶດຜິດໃນກາມ
໒. ຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ
໓. ເປັນຜູ້ພໍໃຈການປະພຶດຜິດໃນກາມ
໔. ກ່າວສັນເສີນການປະພຶດຜິດໃນກາມ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການປະພຶດຜິດໃນກາມ
໔. ກ່າວສັນເສີນການງົດເວັ້ນຈາກການປະພຶດຜິດໃນກາມ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມິດສາຈາຣີສູດທີ ໓ ຈົບ**

# ໔. ມຸສາວາທີສູດ

## ວ່າດ້ວຍຜູ້ເວົ້າຕົວະແລະຜູ້ເວັ້ນຂາດຈາກການເວົ້າຕົວະ

[໔໘໗] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວົ້າຕົວະ
໒. ຊັກຊວນຜູ້ອື່ນໃຫ້ເວົ້າຕົວະ
໓. ເປັນຜູ້ພໍໃຈການເວົ້າຕົວະ
໔. ກ່າວສັນເສີນການເວົ້າຕົວະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຕົວະ
໔. ກ່າວສັນເສີນການງົດເວັ້ນຈາກການເວົ້າຕົວະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມຸສາວາທີສູດທີ ໔ ຈົບ**

# ໕. ປິສຸນະວາຈາສູດ

## ວ່າດ້ວຍຜູ້ເວົ້າສັບສໍ່ແລະຜູ້ເວັ້ນຂາດຈາກການເວົ້າສັບສໍ່

[໔໘໘] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວົ້າສັບສໍ່ ໒. ຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່
໓. ເປັນຜູ້ພໍໃຈການເວົ້າສັບສໍ່ ໔. ກ່າວສັນເສີນການເວົ້າສັບສໍ່

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າສັບສໍ່
໔. ກ່າວສັນເສີນການງົດເວັ້ນຈາກການເວົ້າສັບສໍ່

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປິສຸນະວາຈາສູດທີ ໕ ຈົບ**

## ໖. ຜະຣຸສະວາຈາສູດ

## ວ່າດ້ວຍຜູ້ເວົ້າຄຳຫຍາບແລະຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ

[໒໖໙] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວົ້າຄຳຫຍາບ ໒. ຊັກຊວນຜູ້ອື່ນໃຫ້ເວົ້າຄຳຫຍາບ
໓. ເປັນຜູ້ພໍໃຈການເວົ້າຄຳຫຍາບ ໔. ກ່າວສັນເສີນການເວົ້າຄຳຫຍາບ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄຳຫຍາບ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຄຳຫຍາບ
໔. ກ່າວສັນເສີນການງົດເວັ້ນຈາກການເວົ້າຄຳຫຍາບ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ຜະຣຸສະວາຈາສູດທີ ໗ ຈົບ**

## ໗. ສຳຜັບປະລາປະສູດ

## ວ່າດ້ວຍຜູ້ເວົ້າບໍ່ມີສາຣະແລະຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ

[໒໗໐] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວົ້າບໍ່ມີສາຣະ
໒. ຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ
໓. ເປັນຜູ້ພໍໃຈການເວົ້າບໍ່ມີສາຣະ
໔. ກ່າວສັນເສີນການເວົ້າບໍ່ມີສາຣະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາຣະ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າບໍ່ມີສາຣະ
໔. ກ່າວສັນເສີນການງົດເວັ້ນຈາກການເວົ້າບໍ່ມີສາຣະ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ສຳຜັບປະລາປະສູດທີ ໗ ຈົບ**

## ໘. ອະພິດຊາລຸສູດ

## ວ່າດ້ວຍຜູ້ເພ່ງເລັງຢາກໄດ້ຂອງເຂົາແລະຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ

[໔໗໑] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນ ນະຣົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ
໒. ຊັກຊວນຜູ້ອື່ນໃຫ້ເພ່ງເລັງຢາກໄດ້ຂອງເຂົາ
໓. ເປັນຜູ້ພໍໃຈຄວາມເພ່ງເລັງຢາກໄດ້ຂອງເຂົາ
໔. ກ່າວສັນເສີນຄວາມເພ່ງເລັງຢາກໄດ້ຂອງເຂົາ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໒. ຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ

໓. ເປັນຜູ້ພໍໃຈຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ
໔. ກ່າວສັນເສີນຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະພິດຊາລຸສູດທີ ๗ ຈົບ**

## ໘. ພະຍາປັນນະຈິດຕະສູດ

## ວ່າດ້ວຍຜູ້ມີຈິດພະຍາບາດແລະຜູ້ມີຈິດບໍ່ພະຍາບາດ

[໔໗໔] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຮົກຄື ຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ມີຈິດພະຍາບາດ
໒. ຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ
໓. ເປັນຜູ້ພໍໃຈຄວາມມີຈິດພະຍາບາດ
໔. ກ່າວສັນເສີນຄວາມມີຈິດພະຍາບາດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄືຖືກ ນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບ ອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ມີຈິດບໍ່ພະຍາບາດ
໒. ຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ
໓. ເປັນຜູ້ພໍໃຈຄວາມມີຈິດບໍ່ພະຍາບາດ
໔. ກ່າວສັນເສີນຄວາມມີຈິດບໍ່ພະຍາບາດ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມດຳລົງຢູ່ໃນສະຫວັນຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ພະຍາປັນນະຈິດຕະສູດທີ ໙ ຈົບ**

## ໑໐. ມິດສາທິດຖິສູດ

## ວ່າດ້ວຍຜູ້ເປັນມິດສາທິດຖິແລະຜູ້ເປັນສຳມາທິດຖິ

[໒໗໓] ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນມິດສາທິດຖິ
໒. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ
໓. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ
໔. ກ່າວສັນເສີນຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ປະການ ອັນໃດແດ່ ຄື

໑. ຕົນເອງເປັນສຳມາທິດຖິ
໒. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ
໓. ເປັນຜູ້ພໍໃຈຄວາມເປັນສຳມາທິດຖິ
໔. ກ່າວສັນເສີນຄວາມເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມດຳລົງຢູ່ໃນ ສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມິດສາທິດຖິສູດທີ ໑໐ ຈົບ**

**ກຳມະປະຖະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື


໑. ປານາຕິປາຕີສູດ
໒. ອະທິນນາທາຍີສູດ
໓. ມິດສາຈາຣີສູດ
໔. ມຸສາວາທີສູດ
໕. ປິສຸນະວາຈາສູດ
໖. ຜະຣຸສະວາຈາສູດ
໗. ສຳຜັບປະລາປະສູດ
໘. ອະພິດຊາລຸສູດ
໙. ພະຍາປັນນະຈິດຕະສູດ
໑໐. ມິດສາທິດຖິສູດ


# ໘. ຣາຄະເປີຍຍາລະ

## ໑. ສະຕິປັດຖານສູດ

### ວ່າດ້ວຍການຈະເລີນສະຕິປັດຖານເພື່ອຮູ້ຍິ່ງຣາຄະ

[໔໗໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ)

ທຳ ໔ ປະການ[១] ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ
໓. ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ
໔. ພິຈາລະນາເຫັນທຳໃນທຳຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ ເພື່ອຮູ້ຍິ່ງຣາຄະ

**ສະຕິປັດຖານສູດທີ ໑ ຈົບ**

## ໒. ສຳມັບປະທານສູດ

### ວ່າດ້ວຍການຈະເລີນສຳມັບປະທານເພື່ອຮູ້ຍິ່ງຣາຄະ

[໔໗໕] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການເພື່ອຮູ້ຍິ່ງຣາຄະ

ທຳ ໔ ປະການ໔ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸ ສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ
໒. ສ້າງສັນທະຯລຯ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ
໓. ສ້າງສັນທະຯລຯ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ເພື່ອຮູ້ຍິ່ງຣາຄະ

**ສຳມັບປະທານສູດທີ ໒ ຈົບ**

## ໓. ອິດທິປາທະສູດ

## ວ່າດ້ວຍການຈະເລີນອິດທິບາດເພື່ອຮູ້ຍິ່ງຣາຄະ

[໒໗໖] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການເພື່ອຮູ້ຍິ່ງຣາຄະ

ທຳ ໔ ປະການ[9] ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດ ຈາກສັນທະແລະຄວາມພຽນສ້າງສັນ)
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິຣິຍະ ແລະຄວາມພຽນສ້າງສັນ)
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດ ຈາກຈິດຕະແລະຄວາມພຽນສ້າງສັນ)
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ)

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ເພື່ອຮູ້ຍິ່ງຣາຄະ

**ອິດທິປາທະສູດທີ ໓ ຈົບ**

## ໔-໓໐. ປະຣິນຍາທິສູດ

## ວ່າດ້ວຍການຈະເລີນທຳເພື່ອກຳນົດຮູ້ຣາຄະເປັນຕົ້ນ

[໔ກກ-໓໐໓] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ

ຯລຯ ເພື່ອລະຣາຄະ

ຯລຯ ເພື່ອຄວາມສິ້ນໄປແຫ່ງຣາຄະ

ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ

ຯລຯ ເພື່ອຄວາມຄາຍອອກແຫ່ງຣາຄະ

ຯລຯ ເພື່ອຄວາມດັບໄປແຫ່ງຣາຄະ

ຯລຯ ເພື່ອຄວາມສະລະຣາຄະ

ຯລຯ ເພື່ອຄວາມສະລະຄືນຣາຄະ ຯລຯ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ເພື່ອຄວາມສະລະຄືນຣາຄະ ຯລຯ

**ປະຣິນຍາທິສູດທີ ໔-໓໐ ຈົບ**

## ໓໑-໕໑໐. ໂທສະອະພິນຍາທິສູດ

## ວ່າດ້ວຍການຈະເລີນທຳເພື່ອຮູ້ຍິ່ງໂທສະເປັນຕົ້ນ

[໓໐໔-ກ໗໓] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ເພື່ອຮູ້ຍິ່ງໂທສະ (ຄວາມຄິດປະທຸດສະຮ້າຍ)

ຯລຯ ເພື່ອກຳນົດຮູ້ໂທສະ

ຯລຯ ເພື່ອຄວາມສິ້ນໂທສະ

ຯລຯ ເພື່ອລະໂທສະ

ຯລຯ ເພື່ອຄວາມສິ້ນໄປແຫ່ງໂທສະ

ຯລຯ ເພື່ອຄວາມເສື່ອມໄປແຫ່ງໂທສະ

ຯລຯ ເພື່ອຄວາມຄາຍອອກແຫ່ງໂທສະ

ຯລຯ ເພື່ອຄວາມດັບໄປແຫ່ງໂທສະ

ຯລຯ ເພື່ອຄວາມສະລະໂທສະ

ຯລຯ ເພື່ອຄວາມສະລະຄືນໂທສະ ຯລຯໂມຫະ (ຄວາມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖໍາພະ (ຄວາມຫົວດື້) ຯລຯ ສາຣໍາພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືໂຕ) ຯລຯ ອະຕິມານະ (ຄວາມດູໝິ່ນ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທໍາ ໔ ປະການນີ້ ເພື່ອຄວາມສະລະຄືນປະມາທະ

**ໂທສະອະພິນຍາທິສູດ ໓໑-໕໑໐ ຈົບ**

**ຣາຄະເປີຍຍາລະ ຈົບ**

**ຈະຕຸກກະນິບາດ ຈົບ**